“

ມີຄວາມຮູ້ ແຕ່ຖ້າຂາດ

ຈິນຕະນາການ ກໍໄຮ້ຄຸນຄ່າ...

”

ສະບາຍດີທ່ານຜູ້ອ່ານ,

ເມື່ອບໍ່ນານມານີ້, ຂ້າພະເຈົ້າໄດ້ທຳການລິເລີ່ມນຳເອົາເພງລາວເກົ່າ ມາກ່າຍຂຽນ ເປັນໂນຕສາກົນແລະເສບເປັນແບບດົນຕຣີບັນເລງ (ບໍ່ມີສຽງຂັບຮ້ອງນຳ), ຈຸດປະສົງ ແມ່ນບໍ່ໄດ້ຫວັງໃຫ້ບັນລຸຄວາມສົມບູນແບບ ໃນການຜະສົມປະສານສຽງ ຫຼືແນໃສ່ເອົາຄຸນນະພາບຂອງການບັນທຶກສຽງ ຫຼືວິດີໂອການເສບບັນເລງ ທາງດ້ານເຄື່ອງດົນຕຣີແຕ່ຢ່າງໃດ. ເພາະວ່າເປົ້າໝາຍ ບໍ່ແມ່ນເພື່ອສຳລັບການອອກເປັນ CD ຫຼື DVD. ແຕ່ວ່າ ມັນແມ່ນຄວາມປະສົງຢາກແລກປ່ຽນແລະແບ່ງປັນຄວາມຮູ້ຄວາມສາມາດສ່ວນຕົວຂອງຂ້າພະເຈົ້າກັບຄົນອື່ນ (ຜູ້ທີ່ສົນໃຈ), ໂດຍສະເພາະ ແມ່ນອີງໃສ່ຂໍ້ມູນຕົ້ນສະບັບຂອງຜູ້ປະພັນເພງຕົ້ນຕໍເທົ່າທີ່ຄົ້ນຄວ້າແລະຊອກຫາມາໄດ້.

ແນ່ນອນວ່າ ມັນຍັງຈະບໍ່ສົມບູນແລະຍັງມີຂໍ້ຂາດຕົກບົກພ່ອງຢູ່ ແຕ່ຈະພະຍາຍາມດັດແປງແລະແກ້ໄຂຕາມເວລາອຳນວຍ.

ທັງນີ້ ແມ່ນເພື່ອໃຫ້ຄົນຮຸ່ນໃໝ່ແລະຮຸ່ນເກົ່າ ຫຼືຄົນຊາດອື່ນເຖິງວ່າຈະບໍ່ແມ່ນຄົນລາວ (ຖ້າຫາກວ່າພວກເຂົາເຈົ້າຫາກມີຄວາມສົນໃຈໃນສຽງເພງແລະດົນຕຣີລາວ ໂດຍສະເພາະແມ່ນຜູ້ທີ່ມີຄວາມສາມາດອ່ານແລະເຂົ້າໃຈໂນຕດົນຕຣີເປັນຫຼືບໍ່ເປັນກໍຕາມແຕ່) ໄດ້ມີບ່ອນອີງເປັນຂໍ້ມູນໃນການສຶກສາແລະຄົ້ນຄວ້າ. ຈຸດປະສົງກ່ອນອື່ນ ແມ່ນຫຼີກລ່ຽງການບິດເບືອນຕົ້ນສະບັບອັນດັ້ງເດີມ ກ່ຽວກັບ ຊື່ເພງ ຊື່ຜູ້ແຕ່ງ ນັກຮ້ອງຕົ້ນສະບັບ ເນື້ອເພງ ຣະດັບສຽງ ແລະ ຈັງຫວະຕົ້ນຕໍ.

ເນື່ອງຈາກວ່າໃນເວລາຫຼາຍປີທີ່ຜ່ານມາ, ຂ້າພະເຈົ້າໄດ້ຕິດຕາມແລະສັງເກດເຫັນວ່າ ໃນບັນດາການນຳເອົາເພງລາວເກົ່າມາບັນເລງແລະຂັບຮ້ອງໃໝ່ຈຳນວນໜຶ່ງ, ມີຂໍ້ຂາດຕົກບົກພ່ອງທາງດ້ານຊື່ເພງ ຊື່ຜູ້ແຕ່ງ ເນື້ອຮ້ອງທຳນອງແລະຈັງຫວະ. ມັນໄດ້ສ້າງຄວາມສັບສົນແລະຄວາມເຂົ້າໃຈຜິດ ມີການຂັດແຍ່ງຖົກຖຽງກັນໃນໝູ່ຜູ້ຟັງ ຫຼືນັກດົນຕຣີທີ່ພະຍາຍາມຈະເສບແລະບັນເລງໂດຍສະເພາະ.

ສາເຫດຄືງແມ່ນຍ້ອນຂາດຂໍ້ມູນ ຂໍ້ບັນທຶກຂີດຂຽນອັນຖືກຕ້ອງ ມີແຕ່ອາສັຍຄວາມຈື່ຈຳ ອັນມີຂອບເຂດຈຳກັດເປັນທີ່ເພິ່ງ ແລະບາງຈຳນວນກໍມີການເດົາເອົາກໍມີ ເພາະຂາດຄວາມແນ່ນອນໃຈ.

ຂ້າພະເຈົ້າເປັນຜູ້ໜຶ່ງ ທີ່ມີຄວາມມັກຮັກໃນສຽງເພງແລະດົນຕຣີລາວມາແຕ່ນ້ອຍ ບໍ່ເຄີຍໄດ້ເຂົ້າໂຮງຮຽນດົນຕຣີແຫ່ງໃດມາກ່ອນ ອາສັຍແຕ່ການສຶກສາ ແລະຄົ້ນຄວ້າດ້ວຍຕົນເອງຕລອດມາ ດ້ວຍຄວາມມັກຮັກແຕ່ຢ່າງດຽວ ເພາະເປັນຄົນມັກອ່ານແລະມີຈິດໃຈກະຕືລືລົ້ນຊອກຫາເຫດຜົນ.

ຂ້າພະເຈົ້າຄິດແລະເຂົ້າໃຈວ່າ ໂນຕດົນຕຣີສາກົນ (solfège)
ແມ່ນວິຊາສາດແລະທິດສະດີແນວໜຶ່ງ ຊຶ່ງເປັນພື້ນຖານຂອງດົນຕຣີແລະສຽງເພງ,
ເນື່ອງຈາກວ່າມັນແມ່ນລາຍລັກອັກສອນຂອງສຽງ ເຊັ່ນດຽວກັນກັບ
ການຂີດຂຽນຂອງພາສາປາກເວົ້າ. ມັນມີຣະບຽບແລະກົດເກນຂໍ້ບັງຄັບຂອງມັນເອງ
ເພື່ອບົ່ງບອກບົດເພງຈົນໄປຮອດການເສບບັນເລງດ້ວຍເຄື່ອງດົນຕຣີຕ່າງໆຢ່າງຄົບຖ້ວນ.
ຖ້າບໍ່ມີໂນຕແລະກົດເກນດັ່ງກ່າວ, ມັນກໍເປັນການຍາກແລະລຳບາກ
ໃນການຕິດຕໍ່ແລະສື່ສານກັບຄົນອື່ນ ແມ່ນແຕ່ການສົນທະນາລະຫວ່າງ
ນັກດົນຕຣີແລະນັກສິລະປິນດ້ວຍກັນ.
ເພາະທີ່ຜ່ານມາ ແມ່ນອາສັຍພຽງແຕ່ຄວາມຈື່ຈຳແລະຮັບຟັງດ້ວຍຫູ ແບບຖ່ອງຂຶ້ນໃຈ
ສ່ວນການບັນທຶກຂີດຂຽນແມ່ນບໍ່ມີຫຼັກການພຽງພໍແລະບໍ່ຄົບຖ້ວນສົມບູນຕາມແບບສາກົນ.

ຂ້າພະເຈົ້າບໍ່ຫານຍົກເອົາຄວາມຮູ້ທາງດ້ານໂນຕດົນຕຣີທີ່ໄດ້ຮ່ຳຮຽນດ້ວຍຕົນເອງ
ມາເປັນຫຼັກອ້າງອີງເພື່ອສັ່ງສອນຫຼືຕັດສິນຕຳນິຕິຕຽນນັກສິລປິນ ຜູ້ທີ່ບໍ່ມີໂອກາດ
ຫຼືເວລາໃນການຮຽນຮູ້ທິດສະດີດົນຕຣີ ເພາະບາງທີຍ້ອນເຫດຜົນສ່ວນຕົວຫຼືອື່ນໆ,
ເພາະສັງເກດເຫັນວ່າ ຜ່ານມາພວກເຂົາເຈົ້າກໍສາມາດເຮັດປະດິດຄິດສ້າງບົດເພງຂຶ້ນມາໄດ້
ຈົນສຳເຣັດເປັນຜົນງານ ແລະກາຍເປັນມໍລະດົກອະມະຕະ
ໃຫ້ພວກເຮົາໄດ້ເຫັນແລະໄດ້ຟັງຈົນເທົ່າສູ່ມື້ນີ້...

ທັງຫມົດນີ້ ພາໃຫ້ຂ້າພະເຈົ້າຕັດສິນໃຈ ລົງມືທຳການຮິບໂຮມ
ແລະແບ່ງປັນເພງລາວອະມະຕະຈຳນວນນຶ່ງ ເປັນໂນຕສາກົນ ພ້ອມດ້ວຍເນື້ອຮ້ອງ ແລະ
ທຳນອງຈັງຫວະ ໂດຍບໍ່ຍົກເວັ້ນການລະບຸຊື່ຂອງຜູ່ປະພັນແລະຜູ່ຂັບຮ້ອງຕົ້ນສະບັບ
ດ້ວຍຄວາມເຄົາຣົບແລະນັບຖື ບັນດານັກປະພັນເພງຜູ້ອາວຸໂສ ຊຶ່ງມີຈຳນວນນຶ່ງ
ຍັງມີຊີວິດຢູ່ແລະບາງທ່ານກໍດຳລົງຊີວິດກະແຈກກະຈາຍຢູ່ທົ່ວທະວີບ.

ອີກປະການນຶ່ງ ວິດີໂອທີ່ຂ້າພະເຈົ້າປະດິດຂຶ້ນເພື່ອປະກອບບົດເພງທັງໝົດ
ໂດຍອາສັຍເຄື່ອງດົນຕຣີສາກົນຕົ້ນຕໍຊຶ່ງຮຽກວ່າ "ອໍແກນອັຕໂນມັດ" (Arranger
Keyboard / Clavier Arrangeur) ເສບບັນເລງ ແມ່ນເປັນພຽງແບບຢ່າງ
ໃຫ້ສຶກສາຄົ້ນຄວ້າຕໍ່ໄປ ບໍ່ໃຫ້ຖືເອົາເປັນຫຼັກຕາຍຕົວໃນການຢັ້ງຢືນຂອງບົດເພງ.

ສຸດທ້າຍ ຂໍຂອບໃຈແລະຂໍສະແດງຄວາມຮູ້ບຸນຄຸນບັນດາຄູບາອາຈານ ນັກປະພັນ
ແລະນັກສິລປິນລາວຮຸ່ນອາວຸໂສທຸກໆທ່ານ ທີ່ໄດ້ສ້າງຜົນງານ ບົດເພງຕ່າງໆ
ໄວ້ໃຫ້ປວງຊົນໄດ້ຊື່ນຊົມແລະຄົ້ນຄວ້າສຶກສາຮ່ຳຮຽນສືບຕໍ່ໃຫ້ຍືນຍາວຕລອດການນານ.

ດ້ວຍຄວາມຮັກແພງ
ພົງສມອນ ດາວົງສ໌
Paris, ວັນທີ່ 24/06/2016



ສາລະບານ ດົນຕຣີບັນເລງເພງລາວອະມະຕະ
ພ້ອມໂນຕສາກົນ ແລະເນື້ອຮ້ອງ
ເລີ່ມຕົ້ນຮັບໂຮມແລະເຜີຍແຜ່ : ວັນທີ່ 24/06/2016

# ນ້ອງຄຽດເຣື່ອງຫຍັງ

ເນື້ອຮ້ອງ & ທຳນອງ : ສົມລິດ ພັນນະວົງສ໌
ນັກຮ້ອງຕົ້ນສະບັບ : ສົມລິດ ພັນນະວົງສ໌

~1975

Slow (♩ = 64)

Ab Eb Fm Db Eb Ab

(Trompet) ______ (Organ) ____

**A**

Eb Ab Cm Fm Bbm Db

ນ້ອງ ຄຽດ ນ້ອງ ຊັງ ເຣື່ອງ ຫຍັງ ດວງ ໃຈ ໂປຣດ ຈົ່ງ ເອີ່ຍ ໄຂ ອາ ຈາ ໃຫ້ ອ້າຍ ຟັງ ກ່ອນ

Fm Ab Fm Ab F Db Bb7

ນ້ອງ ເມີນ ໜີ ໜ້າ - ຫ່າງ ໄກ____ ອ້າຍ ທົນ ບໍ່ ໄຫວ ງານ ງອນ ດວງ ຈິດ ສະ ທ້ອນ ອາ ວອນ ງຽບ ເຫງົາ...

**B**

Eb Ab Cm Fm Bbm Db

ນ້ອງ ຕັດ ສິນ ໃຈ ລືມ ອ້າຍ ຫຼື ບາງ ຈົ່ງ ທຳ ເມີນ ໝາງ ກັ້ນ ກາງ ທາງ ເດີນ ເສັ້ນ ເກົ່າ

Fm Ab Fm Ab Fm Eb Ab F

ນ້ອງ ລືມ ແລ້ວ ບໍ້ ສັນ ຍາ____ ລືມ ຫຼື ອາ ຈາ ຂອງ ເຮົາ ທີ່ ເຄີຍ ວອນ ເວົ້າ ວ່າ ຮັກ ຈາກ ໃຈ... ຢ່າ

**C**

Bbm Cm Fm Ab Bbm Eb

ເລີຍ ຫູນ ທືອ ຫູນ ທືອ ຄືນ ດີ____ ຢ່າ ຕັດ ໄມ ຕຣີ ທີ່ ເຄີຍ ສ້າງ ໄວ້

Ab Fm Db Ab F Bbm Bb7 Gb

ນິ່ງ ປີ ທີ່ ຜ່ານ ມາ ນັ້ນ____ ເຮົາ ຮ່ວມ ສຸກ ສັນ ຄອງ ໃຈ____ ອ້າຍ ຍັງ ຮັກ ໄປ ຊື່ອ ນິ ຣັນ ດອນ...

**D**

Eb Ab Cm Fm Bbm Db

ນ້ອງ ຕັດ ສິນ ໃຈ ມີ ໃໝ່ ຫຼື ບາງ ສິ່ງ ທີ່ ຄອຍ ຫວັງ ນ້ອງ ພັງ ທະ ລາຍ ເສັຽ ກ່ອນ

Fm Ab Fm Ab Fm Eb Ab Db

To Coda

1.

ນ້ຳ ຕາ ອ້າຍ ຕົກ ຊອງ ໃນ____ ແສນ ຕຣົມ ຣີ ທັຍ ອາ ທອນ ພໍ່ າ ເພີ້ ກອດ ໝອນ ອາ ວອນ ສ ເມີ... (Solo verse B)

Coda 𝄌

**E**

Ab Fm Bbm Eb Ab Db Dbm Ab

2.

ເມີ... (Coda) ______

Fine

# ນ້ອງຄຽດເຣື່ອງຫຍັງ

Key : Ab
Slow

ເນື້ອຮ້ອງ & ທຳນອງ : ສົມລິດ ພັນນະວົງສ໌
ນັກຮ້ອງຕົ້ນສະບັບ : ສົມລິດ ພັນນະວົງສ໌

~1975

1) ນ້ອງຄຽດນ້ອງຊັງ ເຣື່ອງຫຍັງດວງໃຈ
ໂປຣດຈົ່ງເອີ່ຍໄຂ ວາຈາໃຫ້ອ້າຍຟັງກ່ອນ
ນ້ອງເມີນໜີໜ້າຫ່າງໄກ ອ້າຍທົນບໍ່ໄຫວງານງອນ
ດວງຈິດສະທ້ອນ ອາວອນງຽບເຫງົາ

2) ນ້ອງຕັດສິນໃຈ ລືມອ້າຍຫຼືນາງ
ຈຶ່ງທຳເມີນໝາງ ກັ້ນກາງທາງເດີນເສັ້ນເກົ່າ
ນ້ອງລືມແລ້ວບໍສັນຍາ ລືມຫຼືວາຈາຂອງເຮົາ
ທີ່ເຄີຍວອນເວົ້າ ວ່າຮັກຈາກໃຈ

• ຢ່າເລີຍທູນທືວ ທູນທືວຄືນດີ
ຢ່າຕັດໄມຕຣີ ທີ່ເຄີຍສ້າງໄວ້
ນີ່ງປີທີ່ຜ່ານມານັ້ນ ເຮົາຮ່ວມສຸກສັນຄອງໃຈ
ອ້າຍຍັງຮັກໄປ ຊົ່ວນິຣັນດອນ

3) ນ້ອງຕັດສິນໃຈ ມີໃໝ່ຫຼືນາງ
ສິ່ງທີ່ຄອຍຫວັງ ນ້ອງພັງທະລາຍເສັຽກ່ອນ
ນ້ຳຕາອ້າຍຕົກຊວງໃນ ແສນຕຣົມຣືທັຍອາທອນ
ພ່ຳເພີ້ກອດໝອນ ອາວອນສເມີ...

# ຮັກນີ້ຫຼືຮັກ

ເນື້ອຮ້ອງ & ທຳນອງ : ຄຳດຸ່ນ ວົງສະນິດ
ນັກຮ້ອງຕົ້ນສະບັບ : ຄຳດຸ່ນ ວົງສະນິດ




































# ຮັກນີ້ຫຼືຮັກ

Key : Bm
Lamvong

ເນື້ອຮ້ອງ & ທຳນອງ : ຄຳຕຸ່ນ ວົງສະນິດ
ນັກຮ້ອງຕົ້ນສະບັບ : ຄຳຕຸ່ນ ວົງສະນິດ

~1970

(ສອຍ) | ຮັກນີ້ຫຼືຮັກ ເມື່ອຍາມຮັກເອົາອົກເອົາໃຈ
ຍາມຊັງ ເຂົາຄອງຄົນໃໝ່
ມາຂີ້ໃສ່ຫົວໃຈ ທັງເຈັບທັງເໝັນ

1) ຮັກຂອງຜູ້ຍິງ ຮັກຈິງລະບໍ່ເຫັນວ່າມີ
ຕໍ່ໜ້າເອົາຈິງເອົາຈັງ ລັບຫຼັງນອກຈິດນອກໃຈ
ເຜີແຕ່ພຽງໜ້ອຍດຽວ ຫາກ້ຽວຜູ້ຊາຍຄົນໃໝ່
ໃຜວ່າຮັກໝົດຫົວໃຈ ຢູ່ໃສລະບໍ່ເຫັນວ່າມີ...

(ສອຍ)

2) ຕອນຮັກກັນ ສາບານໃຫ້ລົ້ມໃຫ້ຕາຍ
ຊາດນີ້ບໍ່ຂໍປ່ຽນໃຈ ພົບຊາຍໃໝ່ບໍ່ແລບໍ່ຫຼຽວ
ເວົ້າກັນບໍ່ທັນເຖິງເດືອນ ລືມເລືອນສາບານບໍ່ກ່ຽວ
ຫົວໃຈນ້ອງຊ່າງບິດບ້ຽວ ບໍ່ຂໍກ່ຽວດອກຜູ້ຍິງຫຼອກລວງ...

(ສອຍ)

(ເວົ້າ) | ກະຈັ່ງແມ່ນເຈົ້າບໍ່ມີຕານີ້ ທີ່ງນາກະຄືມີບໍ່ອີດບໍ່ຢາກ
ເຈົ້າໂລດຫາວ່າຫົວໃຈຂ້ອຍເປັນຫ້ອງນ້ຳຊັ້ນຫວາ?

(ສອຍ)

3) ຕອນຮັກກັນ ສາບານໃຫ້ລົ້ມໃຫ້ຕາຍ
ຊາດນີ້ບໍ່ຂໍປ່ຽນໃຈ ພົບຊາຍໃໝ່ບໍ່ແລບໍ່ຫຼຽວ
ເວົ້າກັນບໍ່ທັນເຖິງເດືອນ ລືມເລືອນສາບານບໍ່ກ່ຽວ
ຫົວໃຈນ້ອງຊ່າງບິດບ້ຽວ ບໍ່ຂໍກ່ຽວດອກຜູ້ຍິງຫຼອກລວງ...

# ສຸກເຖີດຄືນດີ

ເນື້ອຮ້ອງ & ທຳນອງ : ຄຳສອນ ພິມມະຈັນ
ນັກຮ້ອງຕົ້ນສະບັບ : ຄຳສອນ ພິມມະຈັນ

~1970




(Organ) ______




ສຸກເຖີດຄືນ ດີ ອ້າຍ ນີ້ ຈຳ ຈາກ ພາກ ຂວັນດວງ ໃຈ ຂໍ ນ້ອງ ຢ່າ ໄດ້ ຄອຍ ເຝົ້າ ໂສກ ສັນ




ອ້າຍ ໄປ ຄາວ ນີ້ ເພື່ອ ຊາດ___ ເພື່ອ ສາ ສ ນາ ສັດຕູ ຣານ ອ້າຍ ໄປ ປາບມານ ໃຫ້ ມັນ ສູນ ໄປ...




ຍິ້ມ ເຖີດ ຄືນ ດີ ຢ່າ ມີ ນ້ຳ ຕາ ອຸ ຣາ ຢ່າ ເສົ້າ ອ້າຍ ຈຳ ຈາກ ເຈົ້າ ເຂົ້າ ປ່າ ພົງ ໄພ




ເພື່ອຄວາມຢູ່ ເຢັນ ເປັນ ສຸກ___ ເພື່ອປາບມອນ ທຸກ ສິ້ນສູນ ໄປ ເພື່ອລາວ ທັງ ຫຼາຍ ຈະ ໄດ້ ສຸກ ສັນ...




ນ້ອງ ຄອຍ ຢູ່ທາງ ນີ້ ໝັ່ນອອນພຣະ ສຣີ ຣັຕ - ນະໄຕຣ ໃຫ້ ຄຸ້ມ - ກັນ ໃຫ້ ເຫຼົ່າ ທະ




ຫານ ພານເດັດ ຊີ ວິດ ໝູ່ ມານ ແລ້ວອ້າຍ ຈະ ດ່ອນ ກັບ ຫັນ ກອດ ຮັບ ຂວັນນ້ອງ ເລີຍ ຄືນ ດີ...




ສຸກ ເຖີດດວງ ໃຈ ຢ່າ ໄດ້ ຮ່ຳ ໄຫ້ ໄປ ເລີຍຂວັນອ່ອນ ຂໍ ດວງ ສ ມອນນອນ ຫຼັບ ຝັນ ດີ




ຢ່າ ລືມ ສິ່ງ ໃຈ ເຖິງ ອ້າຍ___ ທີ່ ໄດ້ ປອງ ໝາຍ ຊີບໄພ ຣີ ແລ້ວເຮົາ ຈະ ມີ ສຸ ຂີ ຮ່ວມ ກັນ...




ກັນ... (Guitar) ______

# ສຸກເຖີດຄືນດີ

Key : Bb
Slow Bolero

ເນື້ອຮ້ອງ & ທຳນອງ : ຄຳສອນ ພິມມະຈັນ
ນັກຮ້ອງຕົ້ນສະບັບ : ຄຳສອນ ພິມມະຈັນ

~1970

1) ສຸກເຖີດຄືນດີອ້າຍນີ້ຈຳຈາກ ພາກຂວັນດວງໃຈ
ຂໍນ້ອງຢ່າໄດ້ ຄອຍເຝົ້າໂສກສັນ
ອ້າຍໄປຄາວນີ້ເພື່ອຊາດ ເພື່ອສາສນາສັຕຣູຮານ
ອ້າຍໄປປາບມານ ໃຫ້ມັນສູນໄປ

2) ຍິ້ມເຖີດຄືນດີຢ່າມີນ້ຳຕາ ອຸຣາຢ່າເສົ້າ
ອ້າຍຈຳຈາກເຈົ້າ ເຂົ້າປ່າພົງໄພ
ເພື່ອຄວາມຢູ່ເຢັນເປັນສຸກ ເພື່ອປາບມວນທຸກສິ້ນສູນໄປ
ເພື່ອລາວທັງຫຼາຍ ຈະໄດ້ສຸກສັນ

• ນ້ອງຄອຍ ຢູ່ທາງນີ້
ໝັ່ນວອນພຣະສຣີ ຣັຕນະໄຕຣໃຫ້ຄຸ້ມກັນ
ໃຫ້ເຫຼົ່າທະຫານ ພານເດັດຊີວິດໝູ່ມານ
ແລ້ວອ້າຍຈະດ່ວນກັບຫັນ ກອດຮັບຂວັນນ້ອງເລີຍຄືນດີ

3) ສຸກເຖີດດວງໃຈຢ່າໄດ້ຮ່ຳໄຫ້ ໄປເລີຍຂວັນອ່ອນ
ຂໍດວງສມອນ ນອນຫຼັບຝັນດີ
ຢ່າລືມສິ່ງໃຈເຖິງອ້າຍ ທີ່ໄດ້ປອງໝາຍຊີບໄພຣີ
ແລ້ວເຮົາຈະມີ ສຸຂີຮ່ວມກັນ...

# ຄອຍສລາຍ

ເນື້ອຮ້ອງ & ທຳນອງ : ນາບັດ ລຳລະໄມ

ນັກຮ້ອງຕົ້ນສະບັບ : ຄຳສອນ ພິມມະຈັນ

~1970

Slow (♩ = 65)

E C♯m B G♯7 F♯m B C♯m

(Intro)

**A**

1 E F♯m A E G♯ C♯m A

ຄອຍ ນ້ອງ ມາ ໄດ້ ນຶ່ງ ປີ ຄອຍ ຈົນ ເຖິງ ຂັດ ນີ້ ຣີ ດີ ອ້າຍ ຣະ ຂົມ ໂຫ້ -

5 E F♯m A F♯ G♯7

ເອີຍ ກ່ອນ ເຄີຍ - ຊື່ນ - ຊົມ ດຽວ ນີ້ ກັບ ມາ ຂື່ນ ຂົມ ໃຫ້ ຄອຍຕຣົມ ຢູ່ ທຸກ ເວ ລາ...

**B**

9 E F♯m A E G♯ C♯m A

ຄອຍ ອ້າຍ ຄອຍ ໃຫ້ ນ້ອງ - ຄືນ ຫືວ ໃຈ ອ້າຍ ສຸດ ຝືນ ຈຶ່ງ ຄືນ ເຖິດ ແກ້ວ ຕາ ອ້າຍ -

13 E F♯m A B E

ຄອຍ ຄອຍ ອັນ - ວິ ວາ ແຕ່ ນ້ອງ ກັບ ລືມ ແລ້ວ ໝາ ລືມ ອາ ຈາ ທີ່ ມີ ຕໍ່ ກັນ... ຫືວ -

**C**

17 B C♯m B E F♯m G♯m C♯m

ໃຈ ນ້ອງ ນາງ ຊ່າງ ບໍ່ ແນ່ ນອນ ເອີາ ແຕ່ຄວາມ ຫຼອກ ຫຼອນ ບໍ່ ອາວອນ ມີ ແຕ່ ແປ ຜັນ ລືມ ຮັກ ເສັຽ

21 A G♯m E C♯m A F♯ B

ສິ້ນ ລືມ ຖິ່ນ ທີ່ ເຄີຍ ສັມ ພັນ ເຈົ້າປະຫານ ຊີ ວັນ___ ໃຈ ອ້າຍ ນັ້ນ ຢ່າງ ເລືອດ ເຢັນ...

**D**

25 E F♯m A E G♯ C♯m A

ຄອຍ ອ້າຍ ຄອຍ ມາ ແສນ - ນານ ເໝືອນເຫ ວາ ສ ວັນ ລິງ ທັນ ອ້າຍ ທັງ ເປັນ ນ້ອງ -

29 E F♯m A To Coda B E B

1.

ນາງ ເຈົ້າ ມາ - ລວງ ເຫຼັ້ນ ອ້າຍ ນີ້ ສຸດ ຈະອາຍ ເອັ້ນເພາະ ຮັກ ອ້າຍ ເປັນ ຄອຍ ສ ລາຍ ເອີຍ... (Solo verse B)

**E**

Coda

33 B E Am F G E Emaj7

2. *rallentissimo...*

ເອັ້ນ ເພາະ ຮັກ ອ້າຍ ເປັນ ຄອຍ ສ ລາຍ ເອີຍ... (Coda) _______ *rall* _______

Fine

# ຄອຍສລາຍ

Key : E
Slow

ເນື້ອຮ້ອງ & ທຳນອງ : ມານັດ ລຳລະໄນ
ນັກຮ້ອງຕົ້ນສະບັບ : ຄຳສອນ ພິມມະຈັນ

~1970

1) ຄອຍ... ນ້ອງມາໄດ້ນິ່ງປີ
ຄອຍຈົນເຖິງບັດນີ້ ຣິດີອ້າຍຣະບົມ
ໂຫ້ເອີຍກ່ອນເຄີຍຊື່ນຊົມ ດຽວນີ້ກັບມາຂື່ນຂົມ
ໃຫ້ຄອຍຕຣົມ ຢູ່ທຸກເວລາ

2) ຄອຍ... ອ້າຍຄອຍໃຫ້ນ້ອງຄືນ
ຫົວໃຈອ້າຍສຸດຝືນ ຈຶ່ງຄືນເຖິດແກ້ອຕາ
ອ້າຍຄອຍຄອຍອັນອິວາ ແຕ່ນ້ອງກັບລືມແລ້ວໝາ
ລືມອາຈາ ທີ່ມີຕໍ່ກັນ

• ຫົວໃຈນ້ອງນາງ ຊ່າງບໍ່ແນ່ນອນ
ເອີາແຕ່ຄວາມຫຼອກຫຼອນ ບໍ່ອາວອນມີແຕ່ແປຜັນ
ລືມຮັກເສັຽສິ້ນ ລືມຖິ່ນທີ່ເຄີຍສັມພັນ
ເຈົ້າປຣະຫານຊີວັນ ໃຈອ້າຍນັ້ນຢ່າງເລືອດເຢັນ

3) ຄອຍ... ອ້າຍຄອຍມາແສນນານ
ເໝືອນເທວາສວັນ ລົງທັນອ້າຍທັງເປັນ
ນ້ອງນາງເຈົ້າມາລວງເຫຼັ້ນ ອ້າຍນີ້ສຸດຈະອາຍເອັ້ນ
ເພາະຮັກອ້າຍເປັນ ຄອຍສລາຍເອີຍ...

# ຂໍພຽງຮ່າງຝັນ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

~1969

Slow (♩ = 50)

Am | E7 | Am

(Intro ad lib...) (♩ = 65) (♩ = 50) (♩ = 68) (♩ = 76) (♩ = 45) (♩ = 65) (♩ = 76) (♩ = 50) (♩ = 45) (♩ = 30) (♩ = 50) (♩ = 65) (♩ = 50)

Am G | F Dm | Am G | F E7

(Intro a tempo...)

(♩ = 100)

**A**

1 Am E | Am | F | C | A7 | Dm

ຈິ່ງ ຈອນ ມາ ເຖິດ ທີ່ - ຮັກ ຝາກ ໃຈ ມາ ຮັກ ກັບ ຄືນ ຮັກ - ເກົ່າ... ຫຼັບ ຕາ ແລ້ວ -

7 F | F | E7

ມາ ຮ່ອນ ເຮືອນ ທໍ ເຮົາ... ອ້າຍ ແປງ ໄວ້ ຄອຍ ຂວັນ ເຈົ້າ ເສົ້າ ຢູ່ ໃນ ຝັນ...

**B**

13 Am E | Am | F | C | A7 | Dm

ຈິ່ງ ຈອນ ມາ ເຖິດ ທີ່ - ຮັກ ເມື່ອ ທາງ ແຫ່ງ ຮັກ ທີ່ ຈິງ ແທ້ - ນັ້ນ ຕ່າງ ເຮົາ ຕ້ອງ

19 F | Am E | Am

ຈຳ ຫັນ ຫຼັງ ໃຫ້ ກັນ ໝົດ ຫວັງ ທີ່ ຈະ ຜູກ ໝັ້ນ ສັນ - ພັນ ໂສ້ - ໃຈ...

**C**

25 Am A | Dm | | E | C

ສຸດ ຫ່ວງ ສຸດ ຮັກ ກັນ ປານ ຈະ ກືນ ກໍ ບໍ່ ອາດ ຝືນ ປະ ເພ ນີ ໄດ້

30 Am A | Dm | C | F | E7

ຈິ່ງ ລືມ ເສັຽຄວາມຫວັງ ທີ່ ສ ລາຍ ເກັບ ເສັຽ ເກັບ ໄວ້ ຊິ່ງ - ຄວາມ ຫງອຍ - ເຫງົາ...

**D**

36 Am E | Am | F | C | A7 | Dm

ຈິ່ງ ຈອນ ມາ ເຖິດ ນິ່ງ - ຂວັນ ອ້ອມ ແຂນ ອ້າຍ ນັ້ນ ອ້າ ຄອຍ ຮັບ - ເຈົ້າ ຮ່າງ ຈິງ ນ້ອງ

42 To Coda | 1. F | E | Am

ເປັນ ຂອງ ຜູ່ ອື່ນ ເຂົາ ຈິ່ງ ຂໍ ພົບ ພຽງ ຮ່າງ ເຈົ້າ ແມ່ນ ພຽງ ຊື່ອ - ຝັນ...

47 F | E7 | Am | Dm | Am | E7 | Am F | E7

(Solo) (Back from C)

Coda

**E**

55 2. F E | Am | Dm Am | E | Am | Am9

(♩ = 50) (♩ = 5) (♩ = 45) (♩ = 7) (♩ = 50)

ເຈົ້າ ແມ່ນພຽງ... ຊື່ອ - ຝັນ...

(Coda rall...) (a tempo)

Fine

# ຂໍພຽງຮ່າງຝັນ

Key : Am
Slow

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

~1969

1) ຈຶ່ງຈອນມາເຖິດ ທີ່ຮັກ
ຝາກໃຈມາຮັກ ກັບຄືນຮັກເກົ່າ
ຫຼັບຕາ ແລ້ວມາ ຮ່ວມເຮືອນຫໍເຮົາ
ອ້າຍແປງໄວ້ຄອຍຂວັນເຈົ້າ ເສົ້າຢູ່ໃນຝັນ

2) ຈຶ່ງຈອນມາເຖິດ ທີ່ຮັກ
ເມື່ອທາງແຫ່ງຮັກ ທີ່ຈິງແທ້ນັ້ນ
ຕ່າງເຮົາ ຕ້ອງຈຳ ຫັນຫຼັງໃຫ້ກັນ
ໝົດຫວັງທີ່ຈະຜູກໝັ້ນ ສັມພັນໂສ້ໃຈ

• ສຸດຫ່ວງສຸດຮັກ ກັນປານຈະກືນ
ກໍ່ບໍ່ອາດຝືນ ປະເພນີໄດ້
ຈຶ່ງລືມເສັຽ ຄວາມຫວັງທີ່ສລາຍ
ເກັບເສັຽເກັບໄວ້ ຊຶ່ງຄວາມຫງອຍເຫງົາ

3) ຈຶ່ງຈອນມາເຖິດ ນິ່ງຂວັນ
ອ້ອມແຂນອ້າຍນັ້ນ ອ້າຄອຍຮັບເຈົ້າ
ຮ່າງຈິງ ນ້ອງເປັນ ຂອງຜູ້ອື່ນເຂົາ
ຈຶ່ງຂໍພົບພຽງຮ່າງເຈົ້າ ແມ່ນພຽງຊື່ອຝັນ...

# ໂຊກດີທີ່ຮັກ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

~1960

Slow Rock (♩ = 76)






























# ໂຊກດີທີ່ຮັກ

Key : Fm
Slow Rock

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

~1960

1) ໂປຣດຈົ່ງໂຊກດີ ເຖີດໜໍ່ຈອມໃຈ
สຸກສັນວິໄລ ສິດໃສທຸກຢ່າງ
ປ່ອຍນ້ອງເລືອກເດີນ ໄປຕາມຫົນທາງ
ທີ່ເຫັນວ່າມັນສວ່າງ ຫຼີກທາງໃຫ້ແລ້ວ

2) ຕັດຈິດສລັດຮັກ ຈາກພາກໄກກັນ
ເມື່ອຮັກມີມານ ກີດກັນຜານແຜ້ວ
ອີກນ້ອງບໍ່ມີ ຈິດໃຈແນ່ແນ່ວ
ປ່ອຍຮັກໃຫ້ເດີນຕາມແກ່ວ ຕາມແຖວແຫ່ງກັມ

• ຖ້ານ້ອງ ເປັນສຸກ
ສິ້ນຄວາມທຸກ ຄວາມຣະທົມເຈັບຊ້ຳ
ອ້າຍນີ້ຍິນດີ ດ້ວຍໃຈນ້ອມນຳ
ຖ້ານ້ອງຊື່ນຊ່ຳ ຝັນດີ

3) ແຕ່ຖ້ານາງເຫງົາ ໂສກເສົ້າອາຣົມ
ເຈັບຊ້ຳຂອມຂົມ ຂື່ນຂົມເຫຼືອທີ່
ໂປຣດຄືນກັບຫຼັງ ທີ່ຮັງນີ້ທີ
ຈະເຊັດນ້ຳຕານ້ອງນີ້ ບໍ່ໜີຫ່າງໄກ...

# ຖິ່ນທອງ

ເນື້ອຮ້ອງ & ທຳນອງ : ພົມມາ ສິມສຸທິ
ນັກຮ້ອງຕົ້ນສະບັບ : ພອນເທພ ເທພພິທັກສ໌

1967

Rumba Cha Cha (♩ = 110)

(Intro)

Eb Bb Eb Eb Gm Bb Eb

ດິນ ຖິ່ນ

**A**

Cm Eb Gm Cm Fm Ab Bb

ນີ້ - ເປັນ ບ້ານ ເຮົາ ເຮົາ ຮັກ ເຫຼືອ ຫຼາຍ___ ຈີນ ອັນ ຕາຍ - ຊີ ອາ ວາຍ ດິນ ຖິ່ນ ໜ້າ___ ແຜ່ນດິນ

Eb Gm Cm Fm F Bb

ທອງ ຂອງ ລາວ ລ້ຽງ ໃຫຍ່ ມາ___ ບໍ່ ລືມ ຄຸນ ເຊົ້າ ປາ ແລະ ອາ ຫານ___ ມີ ຍອດ

**B**

Cm Eb Gm Cm Fm Ab Bb

ຊັບ - ຢູ່ໃນ ດິນ ສິນ ຢູ່ ໃນ ນ້ຳ___ ມີ ອີວ ງາມ - ມີ ຍອດ ທັມ ມີ ຫຼາຍ ດ້ານ___ ກະ ສັດ

Eb Gm Cm Fm Bb Eb Ab Eb

ອີງ ກໍ ຊີງ ຄອຍ ໂປຣດ ປານ___ ເມື່ອ ມີ ທຸກ ຮັຖ - ບານ ຄອຍ ຊ້ອນ ຊູ...___ ເມືອງລາວ

**C**

Ab Cm Bb Cm Bb

ນີ້ ທີ່ ຂ້າ ຮັກ ດັ່ງ ດອກ ໄມ້___ ເກັບ ເອົາ ໄວ້ ກາງ ໃຈ ໃຜ ມາ ລູ່___ ສູ້ ບໍ່

Eb Fm Gm Cm Ab F Bb

ຖອຍ ສູ້ ແຕ່ ຕາຍ ໃຫ້ ໂລກ ຮູ້___ ໃຫ້ ລາວ ຢູ່ ຄູ່ ຟ້າ ອະ ສີງ ຊັຍ___ ໃຈ ໝັ້ນ

**D**

Cm Eb Gm Cm Fm Ab Bb

ໄວ້ - ກະຕັນ ຍູ ກະ ຕະ ເວ ທີ___ ດິນລາວ ມີ - ຄຸນ ຄວາມ ດີ ເຫຼືອ ນັບ ໄດ້___ ໃຫ້ ຢູ່

Eb Gm Cm Fm Bb To Coda 1. Eb Ab Eb

ກິນ ໃຫ້ ຄວາມ ສຸກ ສະ ບາຍ___ ຊີບ ສ ລາຍ ຂໍ ມອບ ກາຍ ໃຫ້ ຖິ່ນ ທອງ...

(Solo verse B)

Coda

**E**

2. Eb Bb Eb

ທອງ... (Coda)

Fine

# ຖິ່ນທອງ

Key : Eb
Cha Cha Cha

ເນື້ອຮ້ອງ & ທຳນອງ : ພິມມາ ສິນສຸທິ
ນັກຮ້ອງຕົ້ນສະບັບ : ພອນເທພ ເທພພິທັກສ໌

1967

1) ດິນຖິ່ນນີ້ ເປັນບ້ານເຮົາ ເຮົາຮັກເຫຼືອຫຼາຍ
ຈົນວັນຕາຍ ຊີວາວາຍ ດິນຖິ່ນໝ້າ
ແຜ່ນດິນທອງ ຂອງລາວ ລ້ຽງໃຫຍ່ມາ
ບໍ່ລືມຄຸນ ເຂົ້າປາ ແລະອາຫານ

2) ມີຍອດຊັບ ຢູ່ໃນດິນ ສິນຢູ່ໃນນ້ຳ
ມີວິວງາມ ມີຍອດທັມ ມີຫຼາຍດ້ານ
ກະສັດອີງ ກໍຊີງ ຄອຍໂປຣດປານ
ເມື່ອມີທຸກ ຣັຖບານ ຄອຍຊ້ອນຊູ

• ເມືອງລາວນີ້ ທີ່ຂ້າຮັກ ດັ່ງດອກໄມ້
ເກັບເອົາໄວ້ ກາງໃຈ ໃຜມາລູ່
ສູ້ບໍ່ຖອຍ ສູ້ແຄ່ຕາຍ ໃຫ້ໂລກຮູ້
ໃຫ້ລາວຢູ່ ຄູ່ຟ້າ ອະສົງຂັຍ

3) ໃຈໝັ້ນໄວ້ ກະຕັນຍູ ກະຕະເວທີ
ດິນລາວມີ ຄຸນຄວາມດີ ເຫຼືອນັບໄດ້
ໃຫ້ຢູ່ກິນ ໃຫ້ຄວາມ ສຸກສະບາຍ
ຊີບສລາຍ ຂໍມອບກາຍ ໃຫ້ຖິ່ນທອງ...

# ຄືນນີ່ງທີ່ບຶງຂຍອງ

ເນື້ອຮ້ອງ & ທຳນອງ : ຄຳຄືນ ເມືອງນະຄອນ

ນັກຮ້ອງຕົ້ນສະບັບ : ຄຳຄືນ ເມືອງນະຄອນ

≲1970

Slow Waltz (♩ = 62)

Eb Fm Bb Eb

(Intro) ______________________________ ຄືນ

**A**

1 Bb Eb Gm Cm

ນີ່ງ ທີ່ ບຶງ ຂ ຍອງ ຮັກ ສຸກ ສົມ ປອງ ຄຽງ ຄອງ ແກ້ວ ຕາ ຫວານ -

5 Eb Gm Cm Eb

ຊື່ນ ສຸກ ໃຈ ໜັກ ໜາ ແລະ ໃຫ້ ສັນ ຍາ ບໍ່ ແປ ປ່ຽນ ຜັນ... ມີ

**B**

9 Bb Eb Gm Cm

ເຈົ້າ ຢູ່ ໃນ ອ້ອມ ແຂນ ເໝືອນ ນີ່ງ ອ່າ ແດນ ເມືອງ ແມນ ສ ອັນ ອ້ອມ -

13 Eb Gm Cm Bb Eb Eb7

ອອດ ດ້ອຍ ຄວາມ ສຸກ ສັນ ທ່າມ ກາງ ແສງ ຈັນ ສຽງ ຫວານ ວອນ ສັ່ງ... ຄືນ

**C**

17 Ab Db Bb Gm

ນີ້ ທີ່ ບຶງ ຂ ຍອງ ນ້ຳ ຕາ ນອງ ດ້ອຍ ຄວາມ ຜິດ ຫວັງ ຂ ຍອງ ຍ້ອນ

21 Cm Fm F Bb

ຍອກ ຍອກ ຍ້ອນ ຄວາມ ຫຼັງ ສິ່ງ ທີ່ ຫວັງ ເພ ພັງ ໄປ ສິ້ນ... ເຈົ້າ

**D**

25 Eb Gm Cm Eb

ຈາກ ຈາກ ໄປ ຢູ່ ໃສ ໃຫ້ ຂ້າ ຊ້ຳ ໃຈ ອາ ລັຍ ຖ ວິນ ຊີບ

29 Eb Gm Cm Bb To Coda | 1. Eb

ໝ້ຳ ເສົ້າ ໂສກ ກັບ ດົນ ຫວັງ ໃຫ້ ຍຸ ພົບ ຄືນ ບຶງ ຂ ຍອງ... (Solo verse B)

**E**

Coda

33 2. Eb Bb Eb Ab Abm Eb

ຍອງ... (Coda) ______________________________ Fine

# ຄືນນີ່ງທີ່ບີງຂຍອງ

Key : Eb
Slow Waltz

ເນື້ອຮ້ອງ & ທຳນອງ : ຄຳຄືມ ເມືອງນະຄອນ
ນັກຮ້ອງຕົ້ນສະບັບ : ຄຳຄືມ ເມືອງນະຄອນ

(≈1970)

1) ຄືນນີ່ງ ທີ່ບີງຂຍອງ
ຮັກສຸກສົມປອງ ຄຽງຄອງແກ້ວຕາ
ຫວານຊື່ນ ສຸກໃຈໜັກໜາ
ແລະໃຫ້ສັນຍາ ບໍ່ແປປ່ຽນຜັນ

2) ມີເຈົ້າ ຢູ່ໃນອ້ອມແຂນ
ເໝືອນນີ່ງອ່າແດນ ເມືອງແມນສວັນ
ອ້ອນອອດ ດ້ວຍຄວາມສຸກສັນ
ທ່າມກາງແສງຈັນ ສຽງຫວານອອນສັ່ງ

• ຄືນນີ້ ທີ່ບີງຂຍອງ
ນ້ຳຕານອງ ດ້ວຍຄວາມຜິດຫວັງ
ຂຍອງຍ້ອນຍອກ ຍອກຍ້ອນຄວາມຫຼັງ
ສີ່ງທີ່ຫວັງ ເພພັງໄປສີ້ນ

3) ເຈົ້າຈາກ ຈາກໄປຢູ່ໃສ
ໃຫ້ຂ້າຊ້ຳໃຈ ອາລັຍຖວີນ
ຊີບໜ້າ ເສົ້າໂສກກັບດິນ
ຫວັງໃຫ້ຍຸພິນ ຄືນບີງຂຍອງ...

# ນ້ອງຄືທຸກສິ່ງຂອງອ້າຍ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ

ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1968

Tango (♩ = 106)

Cm G7 Cm G

(Intro)

A

Cm Cm Eb Ab Eb Cm G

ດຸຈ ດັ່ງ ດາ ຣາ ສາດ ແສງມາ ຈາກ ສ ວັນ ດັ່ງ ນິ່ງ ດວງ ຈັນ ສ່ອງຜືນ ປະ ຖະ

Ab G G7

ພີ ນາງຄື ໂຄມທອງ ສ່ອງຊີ ວິດນີ້ ເປັນ ຣາ ຊີ ນີ ແລະເຈົ້າ ຫືອ ໃຈ...

B

Cm Eb Ab Eb Cm G

ດຸຈ ດັ່ງ ນ້ຳ ຝົນ ຫຼົ່ນ ໄຫຼ ມາ ຈາກ ສ ວັນ ຕົກ ເປັນ ລຳ ທານ ຫຼໍ່ ລ້ຽງ ພືກສາ

Ab G Cm

ໄພ ນາງຄື ກຳລັງ ແຫ່ງພລັງ ນ້ຳ ໄຫຼ ໄຫຼ ໂລມ ຣື ທັຍ ໃຫ້ ຊີ ວິດຍືນ...

C

C7 Fm Bb Eb Ab

ນ້ອງ ຄື ທຸກ ສິ່ງ ທີ່ ອ້າຍ ຕ້ອງ ການ ປັກໃຈ ໃຝ່ ຝັນ ທຸກວັນ ແລະ ຄືນ ນັ່ງນອນຍັງ

Abmaj7 G G7

ເພີ້ ລະ ເມີ ຍາມ ຕື່ນ ທຸກ ວັນ ແລະ ຄືນ ສຸດ ຝືນ ຫືອ ໃຈ...

D

Cm Eb Ab Eb Cm G

ຂາດນາງເຫວ່ ວ້າ ດັ່ງ ນະພາຂາດເດືອນ ດາວ ຕ້ອງ ທົນ ງຽບ ເຫງົາ ໂສກເສົ້າ ສຸດ ເສັຽ

G7 Ab G To Coda 1. Cm

ໃຈ ຄືນວັນ ອາວອນ ຖອດຖອນ ຣືທັຍ ສິ້ນຮັກ ໂລມໃຈ ໄດ້ ແຕ່ ເພີ້ ຄອນ...

(Solo verse B)

E

Coda 2.

Cm G Cm G Cm

ສິ້ນ ຮັກ ໂລມ ໃຈ ໄດ້ ແຕ່ ເພີ້ ຄອນ... (Coda)

Fine

# ນ້ອງຄືທຸກສິ່ງຂອງອ້າຍ

Key : Cm
Tango

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1968

1) ດູຈດັ່ງດາຣາ ສາດແສງມາຈາກສວັນ
ດັ່ງນິ່ງດວງຈັນ ສ່ອງຜືນປະຖະພີ
ນາງຄືໂຄມທອງ ສ່ອງຊີວິດນີ້
ເປັນຣາຊີນີ ແລະເຈົ້າຫົວໃຈ

2) ດູຈດັ່ງນ້ຳຝົນ ຫຼົ່ນໄຫຼມາຈາກສວັນ
ຕົກເປັນລຳທານ ຫຼໍ່ລ້ຽງພືກສາໄພ
ນາງຄືກຳລັງ ແຫ່ງພລັງນ້ຳໄຫຼ
ໄຫຼໂລມຣິທັຍ ໃຫ້ຊີວິດຍືນ

• ນ້ອງຄືທຸກສິ່ງ ທີ່ອ້າຍຕ້ອງການ
ປັກໃຈໃຝ່ຝັນ ທຸກວັນແລະຄືນ
ນັ່ງນອນຍັງເພີ້ ລະເມີຍາມຕື່ນ
ທຸກວັນແລະຄືນ ສຸດຝືນຫົວໃຈ

3) ຂາດນາງເຫວ່ອ້າ ດັ່ງນະພາຂາດເດືອນດາວ
ຕ້ອງທົນງຽບເຫງົາ ໂສກເສົ້າສຸດເສັຽໃຈ
ຄືນວັນອາວອນ ຖອດຖອນຣິທັຍ
ສິ້ນຮັກໂລມໃຈ ໄດ້ແຕ່ເພີ້ຄອນ...

# ເຮືອຮັກທ່າຫືອໃຈ

ເນື້ອຮ້ອງ & ທຳນອງ : ສິມລິດ ພັນນະວົງສ໌
ນັກຮ້ອງຕົ້ນສະບັບ : ສິມລິດ ພັນນະວົງສ໌

~1969

Slow (♩ = 56)

Cm Eb Bb Cm
(Intro) ___ ຍອດ - ດວງ

**A**
1 Eb Gm Cm Ab Eb Gm Cm Eb
ໃຈ ອ້າຍ ນີ້ ໄປ ບໍ່ ລອດ - ເຮືອ ຮັກ ອ້າຍ ມາ ຈອດ ຈອດ ບ່ອນ ນ້ອງ ນີ້ ເອງ ອ້າຍ ມີ ເຮືອ

5 Gm Cm Fm Gm Cm C7 Fm Bb
ຮັກ ບັນ ຈຸ ຮັກ ຈິງ ບໍ່ ຕ້ອງຫວັ່ນ ເກງ ຄວາມຮັກ ຂອງ ໜຸ່ມ ຄືນ ຮ້ອງ ເພງ ຮັກ ແລ້ວ - ກໍ ຕ້ອງ - ຮັກ ຈິງ... ລ່ອງ-ເຮືອ

**B**
9 Eb Gm Cm Ab Eb Gm Cm Eb
ໃຈ ຕາມ ນ້ຳ ຂອງ ຄິດ ລ້ຽວ - ເຮືອ ຮັກ ອ້າຍ ແສນ ປ່ຽວ ປ່ຽວ ໃຈ ໄຮ້ ຄູ່ ອີງ ໄດ້ ມາ ພົບ

13 Gm Cm Fm Gm Cm Bb Eb
ນ້ອງ ທີ່ ສຸດ ໂສ ພາ ໃຈ ກໍ ຮັກ ຈິງ ຂໍ ນ້ອງນາງ ຢ່າ ໄດ້ ປະ ວິງ ອ້າຍ ມອບ - ຮັກ ຈິງ ດ້ວຍ - ໃຈ... ໂອ້ -

**C**
17 Bb Eb Cm
ນາ ວາ ຮັກ___ ຮື... - ຮື... - ຮື... - ມີ ນ້ອງ ເປັນ ທ່າ - ຈອດ ໂອ້ ເຮືອ ຮັກ ທຽບ ໃຈ

21 Ab Bb Cm Ab Eb Bb
ນ້ອງ ລອຍ ລ່ອງ ມາ ແຕ່ ໄກ ຂໍ ຫືອ ໃຈ ຮັກ ຈິງ ໃຫ້ ອ້າຍ ເຖີດ ໜາ... ຍອດ - ດວງ

**D**
25 Eb Gm Cm Ab Eb Gm Cm Eb
ໃຈ ອ້າຍ ນີ້ ຍອມເປັນ ທາດ - ເຮືອ ຮັກ ອ້າຍ ບໍ່ ອາດ ຈາກ ນອນ ນ້ອງ ແກ້ວ ຕາ ດ້ວຍ ວ່າ ເຮືອ

29 Gm Cm Fm Gm Cm Bb To Coda Eb 1.
ຮັກ ບັນ ຈຸ ຮັກເຕັມ ຈົນ ລົ້ນ ອຸ ຣາ ຢ້ານ ເສັຽ ຈິງ ຢ້ານ ເຈົ້າ ຂອງ ທ່າ ຈະ ຫຼົ້ມ - ເຮືອ ຮັກ ອ້າຍ - ຈົມ... (Solo verse B)

Coda
**E**
33 2. Eb Ab Bb Cm Bb C
ຈົມ... (Coda) ___

Fine

# ເຮືອຮັກທ່າຫົວໃຈ

Key : Eb
Slow

ເນື້ອຮ້ອງ & ທຳນອງ : ສົມລິດ ພັນນະວົງສ໌
ນັກຮ້ອງຕົ້ນສະບັບ : ສົມລິດ ພັນນະວົງສ໌

~1969

1) ຍອດດວງໃຈ ອ້າຍນີ້ໄປບໍ່ລອດ
ເຮືອຮັກອ້າຍມາຈອດ ຈອດບ່ອນນ້ອງນີ້ເອງ
ອ້າຍມີເຮືອຮັກ ບັນຈຸຮັກຈິງບໍ່ຕ້ອງຫວັ່ນເກງ
ຄວາມຮັກຂອງ ໜຸ່ມຄືນຮ້ອງເພງ
ຮັກແລ້ວ ກໍຕ້ອງຮັກຈິງ

2) ລ່ອງເຮືອໃຈ ຕາມນໍ້າຂອງຄຶດລ້ຽວ
ເຮືອຮັກອ້າຍແສນປ່ຽວ ປ່ຽວໃຈໄຮ້ຄູ່ອີງ
ໄດ້ມາພົບນ້ອງ ທີ່ສຸດໂສພາໃຈກໍຮັກຈິງ
ຂໍນ້ອງນາງ ຢ່າໄດ້ປະວິງ
ອ້າຍມອບ ຮັກຈິງດ້ວຍໃຈ

• ໂອ້ນາວາຮັກ ຮີ ຮີ ຮີ
ມີນ້ອງ ເປັນທ່າຈອດໄວ້
ເຮືອຮັກທຽບໃຈນ້ອງ ລອຍລ່ອງມາແຕ່ໄກ
ຂໍຫົວໃຈ ຮັກຈິງໃຫ້ອ້າຍເຖີດໜາ

3) ຍອດດວງໃຈ ອ້າຍນີ້ຍອມເປັນທາດ
ເຮືອຮັກອ້າຍບໍ່ອາດ ຈາກນອນນ້ອງແກ້ວຕາ
ດ້ວຍວ່າເຮືອຮັກ ບັນຈຸຮັກເຕັມຈົນລົ້ນອຸຣາ
ຢ້ານເສັຽຈິງ ຢ້ານເຈົ້າຂອງທ່າ
ຈະຫຼົ້ມ ເຮືອຮັກອ້າຍຈົມ...

# ຂວັນໃຈຊາວດິນ

ເນື້ອຮ້ອງ & ທຳນອງ : ສ. ແສງສີຣິວັນ

ນັກຮ້ອງຕົ້ນສະບັບ : ຄຳເຕີນ ຊານຸບານ







ປຽບ ນອນ ນາງເໝືອນ ດັ່ງ ດອກ ຟ້າ ສູງ - ຄ່າ ເລີດ ລອຍ ເອ ຫາ ໂສ ພິນ ປຽບ




ຕົວ ອ້າຍ ເປັນ ເຊັ່ນ ຊາວ ດິນ ມີ ຄ່າ ດຸດ ດັ່ງ ຫີນ ທຽບ ກັບ ເພັດ ນິນ ຕ່າງ ກັນ ໄກ...




ວາ ສ ນາ ອ້າຍ ຕ່ຳ ພຽງ ນີ້ ເຫຼືອ - ທີ່ ຈະ ປອງ ຈະ ຄິດ ຝັນ ໃຝ່ ຈຶ່ງ




ຂໍ ຮ້ອງພຽງ ຟ້າ ຢ່າ ລືມ ໄລ ຂໍ ຈຶ່ງ ເປັນພລັງ ໃຈ ເປັນ ທັງ ແສງ ໄຟ ແກ່ ຊາວ ດິນ...




ອັນ ສາຍ ຝົນ ຫຼົ່ນ ຈາກ ນະ ພາ______ ເຕີມ ຕໍ່ ຊີ ວາ ພືກ ສາ ທີ່ ຄອຍ ຖ ວິນ ອັນຄວາມປຣາ




ນີ ຟ້າ ມີ ຕໍ່ ຊາວ ດິນ ດັ່ງ ນ້ຳ ທິບ ປະ ພົມ ຊີ ວິນ ຊາວ ດິນ ໃຫ້ - ແຈ່ມ ໃສ...




ໂປຣດ ສິງ ສານ ຕ້ອຍ ເຖິດ ດອກ ຟ້າ ຂໍ - ຢ່າ ປ່ອຍ ດິນ ແຫ້ງ ແລ້ງ ເຖິງ ຕາຍ ຫຼັ່ງ




ຄວາມ ເມຕ ຕາ ນັ້ນ ຈາກ ດວງ ໃຈ ດິນ ຈະ ຂໍ ເທີດ ໄວ້ ເປັນ ຈອມ ຂວັນ ໃຈ ແຫ່ງ ຊາວ ດິນ...




ໄວ້...ເປັນ ຈອມຂວັນ ໃຈ ແຫ່ງ ຊາວ ດິນ... (Coda) ____________________

# ຂວັນໃຈຊາວດິນ

Key : Gb
Slow

ເນື້ອຮ້ອງ & ທຳນອງ : ສ. ແສງສິຣິວັນ
ນັກຮ້ອງຕົ້ນສະບັບ : ຄຳເຕີນ ຊານຸບານ

~1970

1) ປຽບ ນວນນາງເໝືອນດັ່ງດອກຟ້າ
ສູງຄ່າ ເລີດລອຍເວຫາໂສພິນ
ປຽບ ຕົວອ້າຍເປັນເຊັ່ນຊາວດິນ
ມີຄ່າດຸດດັ່ງຫີນ ທຽບກັບເພັດນິນຕ່າງກັນໄກ

2) ອາສນາ ອ້າຍຕ່ຳພຽງນີ້
ເຫຼືອທີ່ ຈະປອງຈະຄິດຝັນໃຝ່
ຈຶ່ງຂໍ ຮ້ອງພຽງຟ້າຢ່າລືມໄລ
ຂໍຈົ່ງເປັນພລັງໃຈ ເປັນທັງແສງໄຟແກ່ຊາວດິນ

• ອັນສາຍຝົນ ຫຼົ່ນຈາກນະພາ
ເຕີມຕໍ່ຊີວາ ພືກສາທີ່ຄອຍຖວິນ
ອັນຄວາມປຣານີ ຟ້າມີຕໍ່ຊາວດິນ
ດັ່ງນ້ຳທິບປະພິມຊີວິນ ຊາວດິນໃຫ້ແຈ່ມໃສ

3) ໂປຣດ ສິງສານດ້ອຍເຖິດດອກຟ້າ
ຂໍຢ່າ ປ່ອຍດິນແຫ້ງແລ້ງເຖິງຕາຍ
ຫຼັ່ງຄວາມ ເມຕຕານັ້ນຈາກດວງໃຈ
ດິນຈະຂໍເທີດໄວ້ ເປັນຈອມຂວັນໃຈແຫ່ງຊາວດິນ...

# ນາທີສຸດທ້າຍ

ເນື້ອຮ້ອງ & ທຳນອງ : ນໍຣະສິງ ດາວວົງ

ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

~1970

Slow (♩ = 68)

Ab Bb Fm Bb Eb Ab

(Intro)

**A**

Bb Bb G Cm Ab Bb G

ອີກ ນາ ທີ ດຽວ ອີກ ນາ ທີ ດຽວ ພຽງເທົ່ານັ້ນ ຈະ ຈາກພາກ ກັນ ຈິດ ຕື້ນ ຕັນ ຫວັ່ນດວງ ຣິ ທັຍ

Cm Ab Bb Bb7 Ab F Bb

ສຸດ ແຂງ ໃຈ ຂົ່ມ ຍັງຕຣອມ ຕຣົມຣະ ທົມ ອາ ລັຍ ສຸດ ຄິດ ຫ່ວງໃຍ ບໍ່ ຢາກ ໄປ ໄກ ນົ່ງ ຂວັນ...

**B**

Bb G Cm Ab Bb G

ຢາກຫ້າມ ເວ ລາ ຢາກຫ້າມ ໂລ ກາ ໃຫ້ຢຸດໝຸນ ເກງ ຈະ ສິ້ນ ສູນ ຄວາມລະ ມຸນ ອຸ່ນອາຍສຸກ ສັນ

Cm Ab Bb Bb7 Ab Bb Eb

ຫວັ່ນ ນ້ອງ ມີ ໃໝ່ ປ່ຽນດວງ ໃຈ ຫ່າງ ໄປ ໄກ ກັນ ຈະ ຊ້ຳ ຈາ ບັນ ຫາກສຳ ພັນ ນັ້ນ ສິ້ນ ໃຍ...

**C**

G Cm Fm Bb Eb

ເຫັນ ພຽງ ໃບ ໜ້າ ຍິ້ມ ສັ່ງ ລາ ນາ ທີ ສຸດ ທ້າຍ ມີ

Fm Bb G Eb

ນ້ອງ ແກ່ວງ ໄກວ ດັ່ງ ເຕືອນ ໃຈ ອ້າຍ ຢ່າ ລືມ ສັນ - ຍາ...

**D**

Bb Bb G Cm Ab Bb G

ຫາກ ໄກ ຫ່າງ ກັນ ຫາກ ໄກ ຫ່າງ ກັນ ໃຈປັກ ຝັງ ເຖິງແຜ່ນ ຟ້າ ບັງ ໃຈ ອ້າຍ ຍັງ ດັ່ງ ຈັນ ຄູ່ ຟ້າ

Cm Ab Bb Bb7 Ab — To Coda — 1. Bb Eb (Solo verse B)

ຈະ ຄິດ ຝັນ ໃຝ່ ພຽງດວງ ໃຈ ເຖິງ ໄປ ສຸດ ຕາ ຈະ ຫວັງ ຕັ້ງ ໜ້າ ບໍ່ ລືມ ລາ ແກ້ວ ຕາ ນາງ...

**E**

Coda

2. Bb Eb Ab Eb Bb Eb Ebmaj7

ລາ ແກ້ວ ຕາ ນາງ... (Coda)

*ral...*

Fine

# ນາທີສຸດທ້າຍ

Key : Eb
Slow

ເນື້ອຮ້ອງ & ທຳນອງ : ນໍຣະສິງ ດາວວົງ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

~1970

1) ອີກນາທີດຽວ ອີກນາທີດຽວ ພຽງເທົ່ານັ້ນ
ຈະຈາກພາກກັນ ຈິດຕື້ນຕັນ ຫວັ່ນດວງຣືທັຍ
ສຸດແຂງໃຈຂື່ນ ຍັງຕຣອມຕຣົມ ຣະທົມອາລັຍ
ສຸດຄິດຫ່ວງໃຍ ບໍ່ຢາກໄປ ໄກນິ່ງຂວັນ

2) ຢາກຫ້າມເວລາ ຢາກຫ້າມໂລກາ ໃຫ້ຢຸດໝຸນ
ເກງຈະສິ້ນສູນ ຄວາມລະມຸນ ອຸ່ນອາຍສຸກສັນ
ຫວັ່ນນ້ອງມີໃໝ່ ປ່ຽນດວງໃຈ ຫ່າງໄປໄກກັນ
ຈະຊ້ຳຈາບັນ ຫາກສຳພັນ ນັ້ນສິ້ນໃຍ

- ເຫັນພຽງ ໃບໜ້າ
  ຍິ້ມສັ່ງລາ ນາທີສຸດທ້າຍ
  ມີນ້ອງ ແກວ່ງໄກວ
  ດັ່ງເຕືອນໃຈອ້າຍ ຢ່າລືມສັນຍາ

3) ຫາກໄກຫ່າງກັນ ຫາກໄກຫ່າງກັນ ໃຈປັກຝັງ
ເຖິງແຜ່ນຟ້າບັງ ໃຈອ້າຍຍັງ ດັ່ງຈັນຄູ່ຟ້າ
ຈະຄິດຝັນໃຝ່ ພຽງດວງໃຈ ເຖິງໄປສຸດຕາ
ຈະຫວັງຕັ້ງໜ້າ ບໍ່ລືມລາ ແກ້ວຕານາງ...

# ລາວຮ່ວມສຳພັນ

ເນື້ອຮ້ອງ : ຄຳສີ ສີຣິມະໂນທັມ
ທຳນອງ : ທອງດີ ສຸນທອນວິຈິດ

~1940-50





















# ລາວຮ່ວມສຳພັນ

Key : F　　ເນື້ອຮ້ອງ ຄຳສີ ສີຣິມະໂນທັມ - ທຳນອງ ທອງດີ ສຸນທອນວິຈິດ　　~1940-50

1) ຖິ່ນຖານບ້ານເກີດຂອງເຮົາ　ມີແຕ່ພູເຂົາເຫຼົ່າຜາປ່າດົງ
ພົງໄພອັນໃຫຍ່ແລະກວ້າງ　ເໝີຍໝີໝູ່ກວາງລ່ອງຕາມແຄມເຊ
ເຊົ້າເຢັນເຮົາແລເຫັນໄມ້　ໝອກມົວກົ້ວໃບແສງໃສສ່ອງມາ
ແຂກເຂົາກາເວົ່າຂັນຮ້ອງ　ຟັງສຽງນ້ຳນອງໂຕນຕາດຕົນຜາ
ອາບເຫຼົ້ນເຢັນໃຈຫາຍຮ້ອນ　ຫາຍສ່ວງອຸທອນພັກຜ່ອນກາຍາ...

2) ບ້ານເຮົາບໍ່ເປັນເຊັ່ນນີ້　ທົ່ງກ້ວາງຂວາງດີສຸດສິ້ນຊື່ອຕາ
ມີມ່ວງດວງດອກນາຣີ　ບານຈໍ່ຈູມຈີມີມາກໝັກໝາ
ພ້າວຕານຫວານຝຸຜາງສົ້ມ　ເກີນແສນອຸດົມທັງເຂົ້າແລະປາ
ບ້ານຫຼາຍຢາຍຕາມທົ່ງໃຫຍ່　ແຄມນ້ຳວັງໃສສ່ອງເຫັນໝູ່ປາ
ບ່າວສາວທັງພວກຊາວບ້ານ　ຍູທ່າງທຳການຊື່ນບານອຸຣາ...

3) ແດນລາວຍືດຍາວຄາວໄກ　ມີຊື່ລືໄວ້ລ້ານຊ້າງເດີມມາ
ຢູ່ເໜືອຫຼືວ່າຢູ່ໃຕ້　ບໍ່ແມ່ນອື່ນໄກລ້ວນແຕ່ໄທລາວ
ພີ່ນ້ອງປົກປ້ອງກັນມາ　ຢ່າຕີຢ່າວ່າໄທເໜືອໄທໃຕ້
ຄົນໃດໄດ້ດີມີສຸກ　ຊ່ວຍຊູຜູ່ທຸກກັງວົນສິນໃຈ
ເລືອດເນື້ອເຊື້ອແນວແຖວພັນ　ເຮົາຕ້ອງຮັກກັນຈົນສິ້ນຊີວາ...

4) ເພື່ອນເອີຍຮີບມາດ້ວຍກັນ　ມາຮ່ວມສຳພັນທັງແຮງທັງໃຈ
ໄວໆຮີບມາດ້ວຍກັນ　ມາຮ່ວມປ້ອງກັນເລືອດເນື້ອເຊື້ອລາວ
ໄວໆຮີບຮູ້ສຶກໃຈ　ຊ່ວຍຣະວັງໄພໃຫ້ລາວຍືນຍົງ
ປົງຈິດຊີວິດແລະກາຍ　ເປັນລູກຜູ້ຊາຍຍອມຕາຍເພື່ອຊາດ
ເລືອດຢາດແກ່ຍາດພຽງໃດ　ພະລະຈະໃຫຍ່ໄຊຊາດຈະຍາວ...

# ເຕືອນໃຈລາວ

ເນື້ອຮ້ອງ : ຄໍາສີ ສີຣິມະໂນທັມ

ທໍານອງ : ທອງດີ ສຸນທອນວິຈິດ

~1940-50



























# ເຕືອນໃຈລາວ

Key : F — ເນື້ອຮ້ອງ ຄຳສີ ສີຣິມະໂນທັມ - ທຳນອງ ທອງດີ ສຸນທອນວິຈິດ — ~1940-50

| | | | |
|---|---|---|---|
| 1) | ຍາດວົງພົງເຜົ່າ | ເຮົານີ້ເອີຍ | ລາວເຮົານີ້ເອີຍ |
| | ເຮັດຄືບໍ່ເຄີຍ | ຈະມາເສີຍ | ບໍ່ຢາກລຳຄານ |
| | ການຄິດເຊັ່ນນີ້ | ຜິດປະເພນີ | ພື້ນວິໄສ |
| | ເພາະໄພຣາວີ | ທີ່ໄດ້ເກີດມີ | ບໍ່ຫ່າງໄກ |
| | ເຊື້ອລາວຊາວໄພ່ | ເກືອບສິ້ນສູນໄປ | ໄດ້ເສັຽຊື່ |
| | ຄວນຫຼືນ້ອງພີ່ | ເຮົາຈະຍິນດີ | ໄປຢ່າງໃດ... |
| 2) | ຍາດວົງພົງເຜົ່າ | ເຮົານີ້ເອີຍ | ລາວເຮົານີ້ເອີຍ |
| | ເຮັດຄືບໍ່ເຄີຍ | ຈະມາເສີຍ | ບໍ່ຢາກລຳຄານ |
| | ທ່າທີດີເລີດ | ອັນຈະປະເສີດ | ສິ້ນໃຈປອງ |
| | ຊາວເຮົາພີ່ນ້ອງ | ຕ້ອງຮັກແພງກັນ | ນັ້ນແສນດີ |
| | ຊ່ວຍສ້າງຄວາມດີ | ຈີນໝົດຊີວີ | ທີ່ໝັ້ນໝາຍ |
| | ເປັນຕາຍຮ່ວມທຸກ | ເປັນສຸກຍິ່ງດີ | ດັ່ງນີ້ໄປ... |

# ຫລວງພຣະບາງທີ່ຝັງໃຈ

ເນື້ອຮ້ອງ & ທຳນອງ : ຄຳຄືນ ເມືອງນະຄອນ
ນັກຮ້ອງຕົ້ນສະບັບ : ສຸນທອນ ເທວາ

~1973

Slow Bolero (♩ = 74)

Bb G Cm F Bb F Bb Eb

(Intro) ____________________

**A**

F Bb G Cm F Dm Gm

ຈຳ ຈາກເມືອງຫລວງແລ້ວ ໃຈ ຫ່ວງ ຫາ ຕ້ອງຈາກ ສາວງາມ ໂສ ພາ ຈາກ ລາ ແລ້ວ ໃຈ ໄຫວ ຫວັ່ນ____ ບໍ່ ໄດ້ ລາ

Bb G Cm Bb Cm Ab

ລັບ ຄືງ ໄດ້ ກັບ ມາ ອີກ ຈັກ ວັນ ຖ້າ ກັບ ໄປ ເຖິງ ວຽງ ຈັນ ສອງ ສາມ ວັນ ຈະ ຈິດ ໝາຍ ມາ...

**B**

F Bb G Cm F Dm Gm

ຕ້ອງ ຈາກ ເມືອງຫລວງພຣະ ບາງ ຫ່າງ ໄກ ເຖິງ ຈາກໃຈ ນັ້ນ ອາ ລັຍ ຢູ່ ໃກ້ ນ້ອງ ທຸກ ເວ ລາ______ ບໍ່ ລືມຄືນ

Bb G Cm Bb F Bb

ນັ້ນ ຄືນ ທີ່ ຢູ່ ຮ່ວມກັນ ສັນ ຍາ ບໍ່ ລືມ ຄຳຫວານການ ດາ ໃຫ້ ສັນ ຍາ ຢູ່ ຝັ່ງ ນ້ຳ ຄານ... ໄຫວ້ -

**C**

D7 Gm Eb Bb F Bb Dm

ວອນ ພຣະບາງ ອີງ ພຣະ ສັກ ສິດ______ ຊ່ວຍເນ ຣະ ມິດ ໃຫ້ ຄວາມ ຮັກ ສອງ ເຮົາ ຄືງ ນານ______ ພຣະ ທາດ ພູ

Gm Cm F Gm Eb F

ສີ ງາມ ເດັ່ນ ຍັງ ເປັນ ພະ ຍານ ຢ່າ ລືມ ເດີ້ ຄຳ ສາ ບານ ບໍ່ ນານ ຈະ ຢ້ອນ ມາ ໃໝ່...

**D**

F Bb G Cm F Dm Gm

ຕ້ອງ ຈາກ ເມືອງຫລວງພຣະ ບາງ ຫ່າງ ລາ ຝາກ ຄຳ ສາ ບານ ສັນ ຍາ ຈະ ມາ ຫາ ນ້ອງຈົນ ໄດ້______ ຈະມາ ສູ່

Bb G Cm Bb F To Coda Bb

ຂໍ ນຳ ແມ່ ພໍ່ ດ້ອຍຄວາມຈິງ ໃຈ ໂປຣດຄອຍ ຮັກ ແທ້ ຈາກ ອ້າຍ ຂໍ ຝັງ ໃຈ ຢູ່ ຫລວງພຣະ ບາງ...

1. (Solo verse B)

**E**

Coda

Bb Dm Cm F Bb Eb Ebm Bb

2. ບາງ... (Coda) ____________________

Fine

# ຫລວງພຣະບາງທີ່ຝັງໃຈ

Key : Bb
Slow Bolero

ເນື້ອຮ້ອງ & ທຳນອງ : ຄຳຄິນ ເມືອງນະຄອນ
ນັກຮ້ອງຕົ້ນສະບັບ : ສຸນທອນ ເທວາ

~1973

1) ຈຳຈາກເມືອງຫລວງ ແລ້ວໃຈຫ່ວງຫາ
ຕ້ອງຈາກສາວງາມໂສພາ ຈາກລາແລ້ວໃຈໄຫວຫວັ່ນ
ບໍ່ໄດ້ລາລັບ ຄືງໄດ້ກັບມາອີກຈັກວັນ
ຖ້າກັບໄປເຖິງວຽງຈັນ ສອງສາມວັນຈະຈົດໝາຍມາ

2) ຕ້ອງຈາກເມືອງຫລວງ ພຣະບາງຫ່າງໄກ
ເຖິງຈາກໃຈນັ້ນອາລັຍ ຢູ່ໃກ້ນ້ອງທຸກເວລາ
ບໍ່ລືມຄືນນັ້ນ ຄືນທີ່ຢູ່ຮ່ວມກັນສັນຍາ
ບໍ່ລືມຄຳຫວານການດາ ໃຫ້ສັນຍາຢູ່ຝັ່ງນ້ຳຄານ

• | ໄຫວ້ວອນ ພຣະບາງອີງພຣະສັກສິດ
ຊ່ວຍເນຣະມິດ ໃຫ້ຄວາມຮັກສອງເຮົາຄືງນານ
ພຣະທາດພູສີ ງາມເດັ່ນຍັງເປັນພະຍານ
ຢ່າລືມເດີ້ຄຳສາບານ ບໍ່ນານຈະຢ້ອນມາໃໝ່

3) ຕ້ອງຈາກເມືອງຫລວງ ພຣະບາງຫ່າງລາ
ຝາກຄຳສາບານສັນຍາ ຈະມາຫານ້ອງຈົນໄດ້
ຈະມາສູ່ຂໍ ນຳແມ່ພໍ່ດ້ວຍຄວາມຈິງໃຈ
ໂປຣດຄອຍຮັກແທ້ຈາກອ້າຍ ຂໍຝັງໃຈຢູ່ຫລວງພຣະບາງ...

# ອຳນາດຮັກ

ເນື້ອຮ້ອງ & ທຳນອງ : ສິດ ດົງໂດກ

ນັກຮ້ອງຕົ້ນສະບັບ : ແສງອາຣຸນ ສິດທິພັນ

1973

Slow Bolero (♩ = 66)

(Intro) ______ ຍາມຮັກ

**A**

ກັນ ຂົມ - ຂື່ນ ນ້ອງ ກໍ ວ່າ ຫວານ ຍາມ ຮັກ ກັນ ຄວາມ ທຸກ ນ້ອງ ກໍ ລືມ ສິ້ນ ເຂົ້າ ຂາດ

ແລງ ແກງຂາດ ໝໍ້ ນ້ອງ ບໍ່ ຖ ອິນ ຜັກ ຫຍ້າ ນ້ອງ ກໍ ຈະ ກິນ ຈອນດອຍ ນ້ອງ ກໍ ຈະ ຢູ່ ຫາກ ມີ ອ້າຍ ຢູ່ ແຫ່ງ ນັ້ນ... ຍາມຮັກ

**B**

ກັນ ແສນ - ຮັກ ປານ ຈະ ກິນ ກິນ ເຖິງ ແຜ່ນ ດິນ ນະ ທີ ຈະ ຂວາງ ກັ້ນ ກັ້ນ ອຸປ -

ສັກ ຈະ ມີ ເປັນຮ້ອຍເປັນ ພັນ ຜູ້ ໃຫຍ່ ຈະ ຄອຍ ຫັກ ຫານ ນ້ອງ ຈະ ບໍ່ ຂໍ ເປັນ ອື່ນ ສິ່ງ ດຽວ ຄື ຈະ ທົນ ເອົາ...

**C**

ອຳ ນາດ ແຫ່ງຄວາມ ຮັກ ໜັກ ເກີນ ແຜ່ນ ດິນ ແຜ່ນ ຟ້າ ແມ່ ນ້ຳ ຜືນ ພະ ສຸ ທາ ວ່າ ເລິກ ບໍ່ ເຖິງ ໃຈ

ເຮົາ ພູ ຜາ ທີ່ນ ແຜ່ນ ລານ ໜັກ ລ້ຳ ປຽບ ໃສ່ ຍັງ ເບົາ ຢູ່ ໄກ ຮ່ອນ ຫ້ອຍ ພູ

ເຂົາ ແຮງ ຮັກ ຍັງ ສິ່ງ ເຖິງ ຢູ່ ເພາະ ຮັກ ນັ້ນ ບໍ່ ຈືດ ຈາງ... ຍາມ ຮັກ

**D**

ກັນ ນາ ອີກ ກໍ ເປັນ ສ ວັນ ຍາມ ຊັງ ກັນ ສ ວັນ ກໍ ເລີຍ ອ້າງ ຫວ້າງ ນີ້ ຫວານ

ມັນ ກໍ ກາຍເປັນ ຈືດ ເປັນ ຈາງ ຄວາມຮັກ ກາຍ ເປັນ ບາດ ໝາງ ເອົາ ແມ່ ບໍ່ ໄດ້ ດອກ

To Coda 1. ຮັກ... (Solo verse D) 2. D.S. al Coda

**E**

Coda

3. ຮັກ... (Coda) ______

Fine

# ອຳນາດຮັກ

Key : A
Slow Bolero

ເນື້ອຮ້ອງ & ທຳນອງ : ສິດ ດີງໂດກ
ນັກຮ້ອງຕົ້ນສະບັບ : ແສງອາຣຸນ ສິດທິພັນ

1973

1) ຍາມຮັກກັນ ຂົມຂື່ນນ້ອງກໍວ່າຫວານ
ຍາມຮັກກັນ ຄວາມທຸກນ້ອງກໍລືມສິ້ນ
ເຂົ້າຂາດແລງແກງຂາດໝໍ້ ນ້ອງບໍ່ຖວິນ
ຜັກຫຍ້ານ້ອງກໍຈະກິນ ຈອມດອຍນ້ອງກໍຈະຢູ່
ຫາກມີອ້າຍ ຢູ່ແຫ່ງນັ້ນ

2) ຍາມຮັກກັນ ແສນຮັກປານຈະກືນກິນ
ເຖິງແຜ່ນດິນ ນະທີຈະຂວາງກີດກັ້ນ
ອຸປສັກຈະມີເປັນຮ້ອຍ ເປັນພັນ
ຜູ້ໃຫຍ່ຈະຄອຍຫັກຫານ ນ້ອງຈະບໍ່ຂໍເປັນອື່ນ
ສິ່ງດຽວຄື ຈະທົນເອົາ

• ອຳນາດແຫ່ງຄວາມຮັກ ໜັກເກີນແຜ່ນດິນແຜ່ນຟ້າ
ແມ່ນ້ຳຜືນພະສຸທາ ວ່າເລິກບໍ່ເຖິງໃຈເຮົາ
ພູຜາຫີນແຜ່ນລານ ໜັກລ້ຳປຽບໃສ່ຍັງເບົາ
ຢູ່ໄກຮ່ອມຫ້ວຍພູເຂົາ ແຮງຮັກຍັງສິ່ງເຖິງຢູ່
ເພາະຮັກນັ້ນ ບໍ່ຈືດຈາງ

3) ຍາມຮັກກັນ ນາຣົກກໍເປັນສວັນ
ຍາມຊັງກັນ ສວັນກໍເລີຍອ້າງຫວ້າງ
ນິວຫວານມັນ ກໍກາຍເປັນຈືດເປັນຈາງ
ຄວາມຮັກກາຍເປັນບາດໝາງ ເອົາແນ່ບໍ່ໄດ້ດອກຮັກ...

# ຍາມຮັກຍາມຊັງ

ເນື້ອຮ້ອງ & ທຳນອງ : ເພັດສມອນ
ນັກຮ້ອງຕົ້ນສະບັບ : ເພັດສມອນ

Slow (♩ = 54) ~1970

Am G C D Em

(Intro) ຄວາມ

**A**

Bm D G Em C Bm G

ຮັກ ນ້ອງ ສຸດ ຈະ ພິ ສູດ ທັນ ເພາະ ວ່າ ມັນ ຮ້ອນ ກວ່າ ໄຟ ໄວ ກວ່າ ສຽງ ຄືນ ຄອຍ

Em Am Am D B7 E7 F D

ເຝົ້າ ເອົາ ໃຈ ຮັກ ໃຫ້ ຮ່ອນ ຮຽງ ອິສ ກິ່ນ ອາຍ - ມີ ພຽງ___ ຫຼອກ ໃຫ້ ສ່ຽງ ເປັນ ທາດ ຖ ວິນ... ຍາມ

**B**

Bm D G Em C Bm G

ຮັກ ນ້ອງ ບອກ ວ່າ ຮັກ ກວ່າ ໃຜ ຮັກ ລົ້ນ ໃຈ ຮັກ ລົ້ນ ຟ້າ ລົ້ນ ແຜ່ນ ດິນ ມີ ຊາຍ

Em Am Am D Em G D Em

ອື່ນ ໝື່ນ ພັນ ໝາຍ ໝັ້ນ ຍຸ ພິນ ນ້ອງ ບໍ່ ເຄີຍ ສົນ ໃຈ ໃຜ ສິ້ນ ໃຕ້ ຟ້າ ເໜືອ ດິນ ມີ ອ້າຍ ເທົ່າ ນັ້ນ... ຍາມ

**C**

G E7 Am C G B7

ຊັງ ປຽບ ອ້າຍ ດັ່ງ ເປັນ ໜາມ ຊິ ວິດ ຄອຍ ປັກ ຄອຍ ຂີດ ໃຫ້ ເປັນ ແຜ ແກ່ ຊີ - ວັນ ໃຜ ແລ້ວ

D Em Bm Em G B7 Em

ໜໍ - ນ້າງ ວິ ມານ ຮັກ ເຮົາ ກ່ອນ ນັ້ນ - ພຽງ ອ້າຍ - ຈົນ ກວ່າ ຈອມ ຂວັນ ນ້ອງ ກໍ ຫັນ ໄປ ມີ ຮັກ ໃໝ່... ຄວາມ

**D**

Bm D G Em C Bm G

ທຸກ ອ້າຍ ຜິກ ຫຼົກ ໜີ ບໍ່ ເປັນ ເພາະ ກົດ ເກນ ເໜືອ ໂລກ ຄືນ ນັ້ນ ແຜ່ ຜາຍ ແມ່ນເລືອກ

Em Am Am D Em | To Coda | 1. G D Em

ເກີດ ເອົາ ກັນ ທຸກ ຊັ້ນ ດັ່ງ ໃຈ ໃຜ ຈະ ມາ ຮັບຄວາມ ທຸກ ໄຮ້ ຄີງ ເລືອກເກີດ ໃນ ຊົນ ຊັ້ນ ເສດ ຖີ...

(Solo verse B)

**E** Coda

2. G D Em Em Bm Em Em9

ໄຮ້ ຄີງ ເລືອກ ເກີດ ໃນ ຊົນ ຊັ້ນ ເສດ ຖີ... (Coda)

Fine

# ຍາມຮັກຍາມຊັງ

Key : Em — ເນື້ອຮ້ອງ & ທຳນອງ : ເພັດສມອນ

Slow — ນັກຮ້ອງຕົ້ນສະບັບ : ເພັດສມອນ — ~1970

| | | |
|---|---|---|
| 1) | ຄວາມຮັກ | ນ້ອງສຸດຈະພິສູດທັນ |
| | ເພາະວ່າມັນ | ຮ້ອນກວ່າໄຟໄອກວ່າສຽງ |
| | ຄືນຄອຍເຝົ້າ | ເອົາໃຈຮັກໃຫ້ຮ່ວມຮຽງ |
| | ຮິສກິ່ນອາຍມີພຽງ | ຫຼອກໃຫ້ສ່ຽງເປັນທາດຖອິນ |
| 2) | ຍາມຮັກ | ນ້ອງບອກວ່າຮັກກວ່າໃຜ |
| | ຮັກລົ້ນໃຈ | ຮັກລົ້ນຟ້າລົ້ນແຜ່ນດິນ |
| | ມີຊາຍອື່ນ | ໝື່ນພັນໝາຍໝັ້ນຍຸພິນ |
| | ນ້ອງບໍ່ເຄີຍສົນໃຈໃຜສິ້ນ | ໃຕ້ຟ້າເໜືອດິນມີອ້າຍເທົ່ານັ້ນ |
| • | ຍາມຊັງ | ປຽບອ້າຍດັ່ງເປັນໜາມຊີວິດ |
| | ຄອຍປັກຄອຍຂີດ | ໃຫ້ເປັນແຜແກ່ຊີວັນ |
| | ໃຜແລ້ວໜໍ | ມ້າງວິມານຮັກເຮົາກ່ອນນັ້ນ |
| | ພຽງອ້າຍຈົນກວ່າຈອນຂວັນ | ນ້ອງກໍຫັນໄປມີຮັກໃໝ່ |
| 3) | ຄວາມທຸກ | ອ້າຍຜີກຫຼີກໜີບໍ່ເປັນ |
| | ເພາະກົດເກນ | ເໜືອໂລກຄືນນັ້ນແຜ່ຜາຍ |
| | ແມ່ນເລືອກເກີດ | ເອົາກັນທຸກຊັ້ນດັ່ງໃຈ |
| | ໃຜຈະມາຮັບຄວາມທຸກໄຮ້ | ຄົງເລືອກເກີດໃນຊົນຊັ້ນເສດຖີ... |

# ຍອດນາຣີສີເມືອງ

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ເພັດດາຣາ
ນັກຮ້ອງຕົ້ນສະບັບ : ກອບແກ້ວ ປຽມມະໄລ

1963


















# ຍອດນາຣີສີເມືອງ

Key : Bb
Slow Bolero

ເນື້ອຮ້ອງ & ທຳນອງ : ຄຳຫຼ້າ ເພັດດາຣາ
ນັກຮ້ອງຕົ້ນສະບັບ : ກອບແກ້ວ ປ່ຽມມະໄລ

1963

1) ຍອດນາຣີ ແຫ່ງສີເມືອງ
ຊື່ນ້ອງລືກະເດື່ອງ ຊາວເມືອງກ່າວຂານອ່າງງາມ
ຊາຍໃດເຫັນນ້ອງ ກໍຕ້ອງຫຼົງໃຫຼຕິດຕາມ
ຄືງເປັນຍອດແຫ່ງຄືນງາມ ດ້ວຍຄວາມຊື່ສັດຕໍ່ນ້ອງ

2) ເທບວິມານ ເສກສັນມາ
ຄວາມສວຍນ້ອງລົ້ນຄ່າ ເກີນກວ່າຄືນທຸກຈະປອງ
ເໝືອນຈັນຢູ່ຟ້າ ກະຕ່າຍແຫງນໜ້າແລມອງ
ເມື່ອໃດໜໍຈະໄດ້ຄອງ ນອນນ້ອງດັ່ງປຣາຖນາ

• | ແມ່ນບຸນອ້າຍສ້າງ ແຕ່ປາງກ່ອນກໍ້ມາກມາຍ
ນ້ອງຄົງຈະຄິດເຫັນໃຈ ຕອບຮັກອ້າຍໃຫ້ສົມອຸຣາ
ອ້າຍຫຼົງຮັກເຈົ້າ ຄ່ຳຄືນເຝົ້າແຕ່ຄອນຫາ
ຄອຍໆຄອຍວັນວິວາ ໂອ້ ແກ້ວຕານ້ອງຢ່າໄດ້ອາຍ

3) ຍອດນາຣີ ທີ່ອ້າຍຫຼົງປອງ
ອ້າຍຂໍຮັກນອນນ້ອງ ຈະຄອງຮັກນີ້ຈົນຕາຍ
ແມ່ນຫາກສິ້ນຫວັງ ບໍ່ໄດ້ດັ່ງໃຈໝັ້ນໝາຍ
ອ້າຍເຫັນຈະຕ້ອງລາຕາຍ ມອບກາຍກັບສາສນາ...

# ສາວດ່າສາວມັກ

ເນື້ອຮ້ອງ & ທຳນອງ : ສນອງ ອຸ່ນອຶງ
ນັກຮ້ອງຕົ້ນສະບັບ : ຈ. ປະຈັກໃຈ

Lamvong
(♩= 112)

1969

(Intro) ສາວ -

A
ດ່າ ຂ້ອຍ ວ່າ ສາວ - ມັກ ສາວ - ຮັກ ສາວ ຕ້ອງ ທຳ ທ່າ - ງອນ ສາວ ເບະ
ສິບ ຂ້ອຍ ວ່າ ສາວ - ໃຫ້ - ພອນ ເມື່ອ ເດິກ ອ່ອນ ຊອນ - ຂ້ອຍ ຝັນ ຖືກ ເບີ ໂຕ ກົງ... ສາວ -

B
ປ້ອຍ ສາວ ອ່ອຍ ອ້າຍ ໄປ ຂໍ ສາວ ໜ້າ ງໍ ສາວ ລໍ ໃຫ້ ອ້າຍ ໄປ ສິ່ງ ສາວ ຄິດ
ຮັກ ຕ້ອງ ທຳ ທ່າ ອອດ ຊີງ - ຂ້ອຍ ບໍ່ ຢາກ ພະ ວົງ - ເພາະຢ້ານ ສາວ ຫຼີງ ແລ່ນ - ຕາມ... ຄາວ ໄປ

C
ເຫຼີ້ນ ມີ ເພື່ອນ ມາກ ມາຍ ສາວ ວາງ ທ່າ ລອດ ລາຍ - ເສີຍ ເມີຍ ບໍ່ ກ່ຽວ - ນຳ ນັ້ນ ລະ ສາວ
ຮັກ ທາງ ໃນ ແຕ່ ໃຈ - ດຳ ບາດ ໝູ່ ໝີ ໝິດ ກໍ ທຳ ເຮັດ ໄປ ຕາມ ເຮົາ ຊອບ - ໃຈ... ສາວ ບໍ່

D
ປາກ ສາວ ມັກ ເຮົາ ແລ້ວ ແນ່ ນອນ ພໍ ເດິກ ອ່ອນ ຊອນ ຍາມ ນອນ ຫຍັບ ເຂົ້າ ໃກ້ ໆ ຫາກ ສາວ
ຢິກ ຊ່າງ ມັນ ໃຫ້ ກອດ ໄວ ໆ ຫາກ ເລັບ ມີ ຍາວ ເກີນ ໄປ ເລືອດ ຫຼັ່ງ ໄຫຼ ຢ່າ ຫົວ - ຊາ...

To Coda
(Solo Intro)

E
1.
(Solo verse B)

Coda
F
2.
rall...
(Coda)
Fine

# ສາວດ່າສາວມັກ

Key : Dm
Lamvong LAO

ເນື້ອຮ້ອງ & ທຳນອງ : ສນອງ ອຸ່ນວົງ
ນັກຮ້ອງຕົ້ນສະບັບ : ຈ. ປະຈັກໃຈ

1969

1) ສາວດ່າ　　ຂ້ອຍວ່າສາວມັກ
ສາວຮັກ　　ສາວຕ້ອງທຳທ່າງອນ
ສາວເບະສົບ　　ຂ້ອຍວ່າສາວໃຫ້ພອນ
ເມື່ອເດີກອ່ອນຊອນ　　ຂ້ອຍຝັນຖືກເບີໂຕກົງ

2) ສາວປ້ອຍ　　ສາວອ່ອຍອ້າຍໄປຂໍ
ສາວໜ້າງໍ　　ສາວລໍໃຫ້ອ້າຍໄປສົ່ງ
ສາວຄິດຮັກ　　ຕ້ອງທຳທ່າອອດຊົງ
ຂ້ອຍບໍ່ຢາກພະວົງ　　ເພາະຢ້ານສາວຫຼົງແລ່ນຕາມ

• ຄາວໄປເຫຼັ້ນ　　ມີເພື່ອນມາກມາຍ
ສາວອາງທ່າລອດລາຍ　　ເສີຍເມີຍບໍ່ກ່ຽວນຳ
ນັ້ນລະສາວຮັກ　　ທາງໃນແຕ່ໃຈດຳ
ບາດໝູ່ໝີໝິດກໍທຳ　　ເຮັດໄປຕາມເຮົາຊອບໃຈ

3) ສາວບໍ່ປາກ　　ສາວມັກເຮົາແລ້ວແນ່ນອນ
ພໍເດີກອ່ອນຊອນ　　ຍາມນອນຫຍັບເຂົ້າໃກ້ໆ
ຫາກສາວຢິກ　　ຊ່າງມັນໃຫ້ກອດໄວໆ
ຫາກເລັບມີຍາວເກີນໄປ　　ເລືອດຫຼັ່ງໄຫຼຢ່າຫືອຊາ...

# ຜູ້ຊາຍໜ້າລາຍ "ຕັກກະແຕນ"

ເນື້ອຮ້ອງ & ທຳນອງ : ສິລ ເມືອງໃຕ້ (ປົ່ນ ເຮືອງສັກດ໌)

ນັກຮ້ອງຕົ້ນສະບັບ : ຈັນທີ ສິຣິພອນ

Lamvong

(♩ = 128)

1963

(Sax) ຜູ້

A

ຊາຍ ຮ້ອງ ເພງ ຮ້ອງ ສິ່ງ ວ່າ ຍິງ ອີ່ງ ອອດ ດີ ນາ ໆ ເຫດ ຊາຍ ເອງ ບໍ່ ວ່າ ຫຼອກ

ຍິງ ມາ ແລ້ວ ເທົ່າ ໃດ ຍິງ ເສັຽ ຊື່ ເລົ່າ ລື ກັນ ຍົກ - ໃຫຍ່ ກໍ ຍ້ອນ - ຜູ້ ຊາຍ ໜ້າ ລາຍ ຕັກ ກະ ແຕນ ຕັກ ກະ

ແຕນ ຕັກ ກະ ແຕນ ໜ້າ - ລາຍ ໜ້າ ຜູ້ ຊາຍ ໜ້າ - ລາຍ ຕັກ ກະ ແຕນ... (Sax) ຜູ້

B

ຍິງ ເຄີຍ ພົບ ມາ ກໍ ຍ້ອນ ຜູ້ ຊາຍ ນີ້ ລະ ຄືອ ການ ຄອຍ ຕາມ ລ້າງ - ຕາມ ຜານ ຊອກ ເປັນ

ນານ ຜູ້ ຍິງ ທໍ່ ແຕນ ເພິ່ນ ວ່າ ເພິ່ນ ນັ້ນ ຍັງ ຄອງ ຄວາມ ໂສດ ບອກ - ໂລດ - ແປນ ໆ

ແຕ່ ເບື້ອງ ຫຼັງ ນັ້ນ ແສນ ທັງ ຊູ້ ທັງ ແຟນ ເມັຽ ນ້ອຍ ເມັຽ ຫຼວງ ແສນ - ລວງ ແສນ ລວງ - ຜູ້ - ຊາຍ ແສນ -

ລວງ ແສນ ລວງ - ຜູ້ - ຊາຍ... (Sax) ຜູ້

C

ຍິງ ເກີດ ມີ ປັນ ຫາ ໂລກ ແຕກ ຂຶ້ນ ມາ ກໍ ຍ້ອນ ຜູ້ ຊາຍ ແລ້ວ ຈິ ເຮັດ ຈັ່ງ ໃດ ເພື່ອນ ຍິງ ຈັ່ງ

ໄດ້ ຊົ່ງ ຕວງ ກ່ອນ ຈະ ຮັກ ຜູ້ ຊາຍ ສືບ ຕົ້ນ - ສືບ ປາຍ ໃຫ້ ດີ ຢ່າ ລ່ວງ ເພາະ ຊາຍ ບໍ່ ແຂວນ - ປ້າຍ - ກໍ່ -

ດວງ ຂ້ອຍ ຈັ່ງ ເປັນ ຫ່ວງ ຮ້ອງ - ເພງ ເຕືອນ ເພື່ອນ ຍິງ ຮ້າຍ ຈິງ ຮ້າຍ ຈິງ - ຜູ້ - ຊາຍ ຮ້າຍ

ຈິງ ຮ້າຍ ຈິງ - ຜູ້ - ຊາຍ... (Sax) ມີ

D

ໃວ ກໍ ເປັນ ທີ່ ນິ່ງ ທ່າ ລິງ ກໍ ສຸດ ຜູ້ ຊາຍ ປາກ ວ່າ - ມີ ທັງ ພ້ອມ ບາຍ ຣະ ວັງ ເອົາ

ໄວ້ ເຕືອດ ເພື່ອນ ຍິງ ຢ່າ ໄປ ຫຼົງ ເຊື່ອ ຄຳ ຂອງ - ຜູ້ - ຊາຍ ໝາຍ ພຽງ ແອບ ອີງ

ເມື່ອ ສິ້ນ ໃຈ ທຸກ ສິ່ງ ແລ້ວ ຊາຍ ຈະ ຖິ້ມ ໃຫ້ ແລ້ງ - ປ່ຽວ ດຽວ ດາຍ ຜູ້ - ຊາຍ ຜູ້ ຊາຍ - ແສນ - ລວງ ແສນ -

ລວງ ແສນ ລວງ - ຜູ້ - ຊາຍ... (Sax) *rall...*

Fine

# ຜູ່ຊາຍໜ້າລາຍ "ຕັກກະແຕນ"

Key : C#m
Lamvong LAO

ເນື້ອຮ້ອງ & ທຳນອງ : ສິລ ເມືອງໃຕ້ (ປິ່ນ ເຮືອງສັກດ໌)
ນັກຮ້ອງຕົ້ນສະບັບ : ຈັນທີ ສິຣິພອນ

1963

1) ຜູ່ຊາຍຮ້ອງເພງຮ້ອງສິ່ງ ວ່າຍິງອີ່ງອອດດີນາໆ
ເຫດຊາຍເອງບໍ່ວ່າ ຫຼອກຍິງມາແລ້ວເທົ່າໃດ
ຍິງເສັຽຊື່ເລົ່າລືກັນຍົກໃຫຍ່ ກໍຍ້ອນຜູ່ຊາຍໜ້າລາຍຕັກກະແຕນ
ຕັກກະແຕນຕັກກະແຕນ ໜ້າລາຍ
ໜ້າຜູ່ຊາຍໜ້າລາຍ ຕັກກະແຕນ...

2) ຜູ່ຍິງເຄີຍພົບມາ ກໍຍ້ອນຜູ່ຊາຍນີ້ລະຕົວການ
ຄອຍຕາມລ້າງຕາມຜານ ຊອກເປັນມານຜູ່ຍິງທົ່ວແດນ
ເພິ່ນວ່າເພິ່ນນັ້ນຍັງ ຄອງຄວາມໂສດບອກໂລດແປນໆ
ແຕ່ເບື້ອງຫຼັງນັ້ນແສນ ທັງຊູ້ທັງແຟນເມັຽນ້ອຍເມັຽຫຼວງ
ແສນລວງແສນລວງຜູ່ຊາຍ ແສນລວງແສນລວງຜູ່ຊາຍ...

3) ຜູ່ຍິງເກີດມີປັນຫາ ໂລກແຕກຂຶ້ນມາກໍຍ້ອນຜູ່ຊາຍ
ແລ້ວຈິເຮັດຈັ່ງໃດ ເພື່ອນຍິງຈຶ່ງໄດ້ຊັ່ງຕອງ
ກ່ອນຈະຮັກຜູ່ຊາຍ ສືບຕົ້ນສືບປາຍໃຫ້ດີຢ່າລ່ອງ
ເພາະຊາຍບໍ່ແຂວນປ້າຍກໍ່ດອງ ຂ້ອຍຈຶ່ງເປັນຫ່ວງຮ້ອງເພງເຕືອນເພື່ອນຍິງ
ຮ້າຍຈິງຮ້າຍຈິງຜູ່ຊາຍ ຮ້າຍຈິງຮ້າຍຈິງຜູ່ຊາຍ...

4) ມີໄອກໍເປັນທີ່ນິ່ງ ທ່າລີງກໍສຸດຜູ່ຊາຍ
ປາກວ່າມີທັງພ້ອມບາຍ ຣະວັງເອົາໄວ້ເຖີດເພື່ອນຍິງ
ຢ່າໄປຫຼົງເຊື່ອຄຳ ຂອງຜູ່ຊາຍໝາຍພຽງແອບອີງ
ເມື່ອສົມໃຈທຸກສິ່ງ ແລ້ວຊາຍຈະຖິ້ມໃຫ້ແລ້ງປ່ຽວດຽວດາຍ
ຜູ່ຊາຍຜູ່ຊາຍແສນລວງ ແສນລວງແສນລວງຜູ່ຊາຍ...

# ວານລົມບອກ

ເນື້ອຮ້ອງ & ທຳນອງ : ພິມມະ ພິມມະສອນ
ນັກຮ້ອງຕົ້ນສະບັບ : ພິມມະ ພິມມະສອນ

1984

Soul Cha-Cha Mambo
(♩ = 120)

D G A7 G D G A7

(Intro)

**A**

1 D Em A7 D D7

ລົມ ພັດ ໂບກ ໄປ ໄກ ສຸດ ໂຍດ

5

ລົມ ທີ່ ພັດ ຜ່ານ ໂຂດ ເຂົາ ຂ່ອຍ ຫອບ ເພງ

9 G A D A7

ນີ້ ໄປ ເຖິງ ດິນ ລາວ ເພື່ອ ໄປ ສົ່ງ ຂ່າວ ວ່າ ຂ້ອຍ ຫ່ວງ ຫາ...

**B**

14 D

ໄກ ຍິ່ງ ຫ່າງ ໄປ ໄກ ຈາກ ເຈົ້າ

18 Em A7 D D7

ເຫງົາ ຂ້ອຍ ເຫງົາ ຫງ່ອມ ຄອນ ຫາ ແຜ່ນ ດິນ ທີ່

22 G A D D7

ຮັກ ຜືນ ພະ ສຸ ທາ ອັນ ຜືນ ກຳ ເນີດ ຂ້າ ປານ ນີ້ ເປັນ ເຊັ່ນ ໃດ... ຂ້ອຍ ຈາກ ມາ ຄາວ

**C**

27 G A D

ນີ້ ທຸກ ນາ ທີ ຮ້ອງ ໄຫ້ ຈະ ຢູ່ ແຜ່ນ ດິນ

31 Em E A7

ໃດ ບໍ່ ເໝືອນ ຢູ່ ດິນ ລາວ...

**D**

35 D

ໄກ ຍິ່ງ ຫ່າງ ໄປ ໃຈ ຍິ່ງ ຫ່ວງ

39 Em A7 D D7

ຫວງ ຂ້ອຍ ຫວງ ແຕ່ ດິນ ລາວ ຢາກ ກັບ ໄປ ສ້າງ

43 G A To Coda 1. D A7

ສາ ບ້ານ ເກີດ ຂອງ ເຮົາ ລົມ ເອີຍ ຊ່ອຍ ບອກ ຂ່າວ ແທນ ຂ້ອຍ ທີ ເຖີດ ລົມ...

(Solo verse B)

**E**

Coda

48 2. D A D A D

ລົມ... ລົມ ເອີຍ ຊ່ອຍ ບອກ ຂ່າວ ແທນ ຂ້ອຍ ທີ ເຖີດ ລົມ... ລົມ ເອີຍ ຊ່ອຍ ບອກ ຂ່າວ ແທນ ຂ້ອຍ ທີ ເຖີດ... ລົມ...

Fine

